# คู่มือการศึกษาพระอภิธัมม์

ปกิณณกสังคหวิภาค

# พระอภิธัมมัตถสังคหะ

ปริจเฉทที่ ๓

รจนาโดย....

## พระอนุรุทธาจารย์

รวบรวมเรียบเรียงโดย...

**...อาจารย์ไพฑูรย์ อินทวงศ์**

Fresno, California... November 30 2558




**ມູລນິທິ: ສຶກສາ-ປະຕິບັດທັມມ໌ ເພື່ອເຜີຍແຜ່ພຣະພຸທສາສນາ**
**ໂດຍ:** ອາຈາຣຍ໌ ໄພທູຣຍ໌ ອິນທວົງສ໌ ...ເຟຣສະໂນ ແຄລີຟໍເນັຽ, ສຫຣັຖອເມຣິກາ
Telephone: (໕໕໙) ໙໐໖-໑໔໑໐
E-Mail: Pinthavong@hotmail.com
Website: https://sites.google.com/site/laothaidhamma

# ຄຳນຳ

**ປື້**ມ "ຄູ່ມືການສຶກສາພຣະອະພິທັມມັດຖະສັງຄະຫະ ປະຣິຈເຈທທີ່ ໕ (ປະກິຕະກະສັງຄະຫະວິພາຄ)" ນີ້ ໄດ້ຮວບຮວມຮຽບຮຽງ ຂຶ້ນໃຊ້ເປັນຄູ່ມື **ສຶກສາພຣະອະພິທັມມ໌** ໃຫ້ກັບເພື່ອນກັລຍານມິຕຣ໌ທຸກໆ ທ່ານ ແລະເພື່ອຊ່ອຍເຜີຍແຜ່ສຳຫລັບທ່ານທີ່ສົນໃຈທີ່ຢາກມີໄວ້ສຶກສາທາງອອນໄລນ໌ ເພາະເຫັນວ່າຈະຊ່ອຍເຜີຍແຜ່ການສຶກສາພຣະອະພິທັມມ໌ໃຫ້ກວ້າງຂວາງຂຶ້ນ ເພື່ອພວກເຮົາຊາວພຸທສຈະໄດ້ຊ່ອຍກັນສືບທອດວິຊາ "**ວິຊຊາ**" ນີ້ໄວ້ໃຫ້ອນຸຊົນຣຸ່ນຫລັງ...ຯລຯ



ຜູ້ຂຽນຖວາຍປື້ມເຫລັ້ມນີ້ໄວ້ໃນພຸທສາສນາ ຫາກວ່າທ່ານທີ່ຕ້ອງການຈັດພິມພ໌ເພື່ອເຜີຍແຜ່ເປັນທັມມະທານ ກໍຂໍຮ່ວມອນຸໂມທນານາ ນະ ໂອກາສນີ້ດ້ວຍໂດຍບໍ່ຕ້ອງຂໍອນຸຍາຕຈາກຜູ້ຂຽນ ແຕ່ຜູ້ຂຽນບໍ່ອນຸຍາຕຫາກວ່າຈະພິມພ໌ເປັນການຄ້າອັນຫວັງຜົລກຳໄຣ ຜູ້ຂຽນຫວັງຢ່າງຍິ່ງວ່າປື້ມເຫລັ້ມນີ້ຈະໃຫ້ຄວາມຮູ້ທາງການສຶກສາພຣະທັມມ໌ໄດ້ເປັນຢ່າງດີ ຂໍໃຫ້ທ່ານຜູ້ອ່ານຈົ່ງຈະເຣີນໃນພຣະທັມມ໌ຂອງພຣະສາສດາອຣຫັນຕ໌ສັມມາສັມພຸທສເຈົ້າທຸກ ໆ ທ່ານດ້ວຍເທີ້ນຯ

# ສາຣບັນ

## ປກິຕຕກສັງຄຫວິກາຄ

### ພຣະອກິລັມມັຕຖສັງຄຫະ ປຣິຈເຈທທີ່ ໑

************************************************************

ນໂມ ຕສ຺ສ ກຄວໂຕ ອຣຫໂຕ ສມ຺ມາສມ຺ພຸທທ຺ສ຺ສ









# ຄູ່ມືການສຶກສາ

## ປະກິນນະກະສັງຄະຫະວິພາກ

### ພຣະອະພິທັມມັດຖະສັງຄະຫະ ປຣິຈເສດທີ່ ໓

ນໂມ ຕສ຺ສ ກຄວໂຕ ອຣຫໂຕ ສມ຺མາສມ຺ ພຸທສສ຺ສ



## ຄວາມເບື້ອງຕົ້ນ

ຄູ່ມືການສຶກສາເຫລັ້ມນີ້ ໄດ້ຣວບຣວມຄຳສອນພຣະອະພິທັມມັດຖະສັງຄະຫະ ຊຶ່ງ ພຣະອນຸຣຸທສາຈາຣຍ໌ ເປັນຜູ້ຣຈນາ ອັນເປັນປຣິຈເສດທີ່ ໓ ທີ່ມີຊື່ວ່າ **"ປະກິນນະກະສັງຄະຫະວິພາກ"**

**ປະກິນນະກະ** ແປລວ່າ ກຣະຈັດກຣະຈາຍ ຄລະກັນ ເບັດເຕລັດ ຕ່າງ ໆ **ສັງຄະຫະ** ແປລວ່າ ຣວບຣວມໂດຍຫຍໍ້ **ວິພາກ** ແປລວ່າ **ສ່ວນ** ເມື່ອປຣະມວລຣວມກັນເຂົ້າແລ້ວ ປະກິນນະກະສັງຄະຫະວິພາກ ກໍແປລວ່າ ສ່ວນທີ່ຣວບຣວມ ສະແດງໂດຍຫຍໍ້ຊຶ່ງທັມມ໌ຕ່າງ ໆ

***ທັມມ໌ຕ່າງ ໆ ໃນທີ່ນີ້ ຫມາຍເຖິງທັມມ໌ ໖ ຫມວດ ຄື***

໑. ຫມວດ ເວທນາ ທັມມຊາຕິທີ່ສເວີຍອາຣົມຕ໌
໒. ຫມວດ ເຫຕຸ ທັມມຊາຕິທີ່ເຮັດໃຫ້ຜົລເກີດ
໓. ຫມວດ ກິຈ ຄື ການງານຂອງຈິຕ ໑໔ ຢ່າງ
໔. ຫມວດ ທວາຣ ຄື ທາງຮັບຮູ້ອາຣົມຕ໌ຂອງຈິຕ
໕. ຫມວດ ອາຣົມຕ໌ ຄື ສິ່ງທີ່ຈິຕຮູ້, ສິ່ງທີ່ຖືໃຈິຕຮູ້
໖. ຫມວດ ວັຕຖຸ ຄື ທີ່ຕັ້ງທີ່ອາສັຍເກີດຮັບຮູ້ອາຣົມຕ໌ຂອງຈິຕ

ທັງ ໖ ຫມວດນີ້ ເປັນການຮຽນຮູ້ເຖິງຈິຕແລະເຈຕສິກໂດຍລະອຽດ ສຣຸປໄດ້ວ່າໃຫ້ຮຽນຮູ້ວ່າ

ຈິຕແລະເຈຕສິກແຕ່ລະດວງນັ້ນມີເວທນາເປັນ **ສຸຂເວທນາ** ຫລື **ທຸກຂເວທນາ** ເປັນ**ໂທມນັສເວທນາ** ຫລື **ໂສມນັສເວທນາ** ຫລື **ອຸເບກຂາເວທນາ** ຈິຕແລະເຈຕສິກແຕ່ລະດວງນັ້ນ ມີເຫຕຸປຣະກອບ ຫລືບໍ່? ຖ້າມີ ມີເຫຕຸປຣະກອບເທົ່າໃດ ມີຫຍັງແດ່? **ເຫຕຸມີ ໖** ຄື **ໂລກເຫຕຸ, ໂທສເຫຕຸ, ໂມຫເຫຕຸ, ອໂລກເຫຕຸ, ອໂທສເຫຕຸ** ແລະ **ອໂມຫເຫຕຸ**

ໃນແຕ່ລະເຫຕຸນັ້ນ ປະກອບກັບຈິດໃດໄດ້ແດ່ ຈິດແລະເຈຕະສິກແຕ່ລະດວງນັ້ນ ທຳກິຈ (ງານ) ອີຫຍັງໃນ ໑໔ ຢ່າງ ໃນກິຈທັງ ໑໔ ນັ້ນ ມີຈິດໃດທຳໜ້າທີ່ໄດ້ແດ່

ຈິດແລະເຈຕະສິກ ອາສັຍທວານໃດໃນການຮູ້ອາຣົມ ອາສັຍຈັກຂຸທວານ ຫລື ໂສຕທວານ ອາສັຍຄານທວານ ຫລື ຊິວຫາທວານ ອາສັຍກາຍທວານ ຫລື ມະໂນທວານ ຫລື ບໍ່ໄດ້ອາສັຍທວານໃດ ໆ ເລີຍ ຈິດແລະເຈຕະສິກຮັບຮູ້ອາຣົມອັນໃດ ໄດ້ແດ່ໃນອາຣົມ ໖ ແລະອາຣົມ ໖ ນັ້ນ ອິງທັມມ໌ໄດ້ແກ່ຫຍັງ

ຈິດແລະເຈຕະສິກ ອາສັຍວັຕຖຸໃດເກີດ ອາສັຍຈັກຂຸວັຕຖຸ, ໂສຕວັຕຖຸ, ອາສັຍຄານວັຕຖຸ, ຊິວຫາວັຕຖຸ, ອາສັຍກາຍວັຕຖຸ, ຫທຍວັຕຖຸ, ຫລືບໍ່ໄດ້ອາສັຍວັຕຖຸໃດໆ ເກີດຂຶ້ນເລີຍ

***ປະກິຕຕະກະສັງຄະຫະວິພາກນີ້ ພຣະອະນຸຣຸທທາຈາຣຍ໌ໄດ້ປະພັນທ໌ເປັນຄາຖາສັງຄະຫະຮວມ ໑໔ ຄາຖາ ຄາຖາທີ່ ໑ ວ່າ***

໑. ສມ຺ປຢຸຕ຺ຕາ ຢຖາໂຢຄໍ ເຕປຍ຺ຍາສ ສພາວໂຕ
ຈິຕ຺ຕເຈຕສິກາ ທມ຺ມາ ເຕສມ຺ທານິ ຢຖາຣຫໍ ฯ

ແປລຄວາມວ່າ **ສພາວທັມມ໌ ໕໓** ຄື ຈິດແລະເຈຕະສິກ ທັ້ງລັກສະນະແລະການປະກອບຊຶ່ງກັນແລະກັນ ຕາມຄວນແກ່ການທີ່ຈະປະກອບໄດ້ນັ້ນ ໄດ້ສະແດງມາແລ້ວ

ມີຄວາມຫມາຍວ່າ ທີ່ກ່າວມາແລ້ວແຕ່ທຳອິດນີ້ ຄື ສຣຸປທັມມ໌ ໖ ຫມວດ ອັນມີຈິດແລະເຈຕະສິກ ທຳໜ້າທີ່ຕ່າງ ໆ ຈິດ ແລະ ເຈຕະສິກ ຮວມເອີ້ນວ່າ **ສພາວທັມມ໌ ໕໓** ຄື ຈິດ ໑ ແລະ ເຈຕະສິກ ໕໒ ທີ່ນັບຈິດພຽງ ໑ ນັ້ນ ເພາະຈິດມີລັກສະນະຮັບຮູ້ອາຣົມ ພຽງລັກສະນະດຽວເທົ່ານັ້ນ ສ່ວນທີ່ນັບເຈຕະສິກເຕັມຈຳນວນທັງ ໕໒ ກໍເພາະວ່າ ເຈຕະສິກນັ້ນມີລັກສະນະແຕກຕ່າງກັນທັ້ງ ໕໒ ດວງ

## ປະກິຕຕະກະສະແດງທັມມ໌ ໖ ຫມວດ

***ປະກິຕຕະກະສັງຄະຫະວິພາກນີ້ ສະແດງທັມມ໌ ໖ ຫມວດ ດັ່ງມີຄາຖາສັງຄະຫະເປັນຄາຖາທີ່ ໒ ສະແດງວ່າ***

໒. ເວທນາເຫຕຸໂຕ ກິຈ຺ຈ ທ຺ວາຣາລມ຺ພນ ວຕ຺ຖຸໂຕ
ຈິຕ຺ຕຸປ຺ປາທວເສເນວ ສງ຺ຄໂຫ ນາມ ນີຢເຕ ฯ

ແປລຄວາມວ່າ ບັດນີ້ຈັກສະແດງການຣະຄົນປົນກັນຂອງນາມທັມມ໌ ຄື ຈິດແລະເຈຕະສິກດ້ວຍອຳນາຈແຫ່ງ **ຈິຕຕຸປປາທະ** ໂດຍປະເພທຂອງ **ເວທນາເຫຕຸ, ກິຈ, ທວານ, ອາຣົມ** ແລະ **ວັຕຖຸ** ຕາມຄວນຕໍ່ໄປ...ฯ

ຫມາຍຄວາມວ່າ **ຈິຕຕຸປປາທະ** ຄື ຈິດທີ່ເກີດຂຶ້ນພ້ອມກັບເຈຕະສິກທີ່ປະກອບນັ້ນ ຍ່ອມກ່ຽວຂ້ອງ ຕ້ອງຣະຄົນກັບທັມມ໌ທັ້ງ ໖ ຫມວດດັ່ງກ່າວແລ້ວຢ່າງແນ່ນອນສເມີໄປທຸກຂະນະ ບໍ່ມີເວັ້ນເລີຍ ດັ່ງຈະໄດ້ກ່າວຕໍ່ໄປທີລະຫມວດ

## *ໝວດທີ່ ໑ ເວທນາສັງຄະຫະ*

***ເວທນາສັງຄະຫະ*** ຄື ການຣວບຣວມສະແດງໂດຍຫຍໍ້ເຣື່ອງເວທນາ ມີຄາຖາສັງຄະຫະເປັນຄາຖາທີ່ ໓ ວ່າ

໓. ສຸຂໍ ທຸກ຺ຂມຸເປກ຺ຂາຕິ ຕິວິທາ ຕຕ຺ຖ ເວທນາ
ໂສມນສ຺ສໍ ໂທມນສ຺ສ ມິຕິ ເພເທນ ປຍ຺ຈທາ

ແປລຄວາມວ່າ ທັມມ໌ ໓ ຢ່າງ ຄື **ສຸຂ ທຸກຂ໌ ອຸເບກຂາ** ນີ້ເປັນເວທນາ ໓ ເມື່ອເອົາ **ໂສມນັສ ໂທມນັສ** ຣວມເຂົ້າອີກກໍ່ເປັນ **ເວທນາ ໕**

## ອະທິບາຍ

**ເວທນາ** ເປັນເຈຕສິກທັມມ໌ທີ່ທຳຫນ້າທີ່ສເວີຍອາຣົມຕ໌ ຫລືມີຄວາມຮູ້ສຶກໃນອາຣົມຕ໌ ທີ່ມາປຣາກົຜນັ້ນ ຈັດແບ່ງໄດ້ເປັນ ໒ ປຣະເພທ ຄື

ກ. ຈັດຕາມລັກສຕະຂອງການສເວີຍອາຣົມຕ໌ ຄື ຈັດຕາມຄວາມຮູ້ສຶກ ມີຊື່ເອີ້ນວ່າ ອາຣັມມຕານຸພວນນັຍ ຫລື ອາຣັມມຕານຸພວນລັກຂຕນັຍ ຕາມນັຍດັ່ງກ່າວນີ້ ຈຳແນກ ເວທນາອອກເປັນ ໓ ຄື

໑. **ສຸຂເວທນາ** ການສເວີຍອາຣົມຕ໌ເປັນສຸຂ (ຫມາຍເຖິງຄວາມສຸຂກາຍແລະສຸຂໃຈ)
໒. **ທຸກຂເວທນາ** ການສເວີຍອາຣົມຕ໌ທີ່ເປັນທຸກຂ໌ (ຫມາຍເຖິງ ຄວາມທຸກຂ໌ກາຍ ແລະຄວາມທຸກຂ໌ໃຈ)
໓. **ອທຸກຂມສຸຂເວທນາ** ການສເວີຍອາຣົມຕ໌ເປັນກາງ ຄື ບໍ່ສຸຂ ບໍ່ທຸກຂ໌ ໄດ້ແກ່ເສີຍໆ (ຫມາຍເຖິງບໍ່ທຸກຂ໌ ແລະບໍ່ສຸຂ ກໍ່ຄືອຸເບກຂານັ້ນເອງ)

ຂ. ຈັດຕາມປຣະເພທແຫ່ງຄວາມເປັນໃຫຍ່ໃນການສເວີຍອາຣົມຕ໌ ມີຊື່ເອີ້ນວ່າອິນທຣິຢເພທນັຍ ຕາມນັຍນີ້ ຈຳແນກເວທນາອອກ ເປັນ ໕ ຄື

໑. **ສຸຂເວທນາ** ຮູ້ສຶກສບາຍກາຍ ຫມາຍຈະເພາະຄວາມສຸຂກາຍ
໒. **ທຸກຂເວທນາ** ຮູ້ສຶກບໍ່ສບາຍກາຍ ຫມາຍຈະເພາະຄວາມທຸກຂ໌ກາຍ
໓. **ໂສມນັສເວທນາ** ຮູ້ສຶກສບາຍໃຈ ຫມາຍຈະເພາະຄວາມສຸຂໃຈ ດີໃຈ
໔. **ໂທມນັສເວທນາ** ຮູ້ສຶກບໍ່ສບາຍໃຈ ຫມາຍຈະເພາະຄວາມທຸກຂ໌ໃຈ ເສັຽໃຈ
໕. **ອຸເບກຂາເວທນາ** ຮູ້ສຶກເສີຍໆ ຫມາຍເຖິງຄວາມບໍ່ທຸກຂ໌ບໍ່ສຸຂ ເປັນກາງ ໆ

## ເວທນາ ໓

ກ່າວໂດຍ **ອາຣັມມະນານຸກອນນັຍ** ນັ້ນຈຳແນກຈິດໂດຍເວທນາ ໓ ຕາມລັກສະນະຂອງ ການສເວີຍ ຫລືຄວາມຮູ້ສຶກໃນອາຣົມ ໄດ້ດັ່ງນີ້

໑. **ຈິດທີ່ເກີດພ້ອມກັບສຸຂະເວທນາ** ຄື ທັງສຸຂະກາຍແລະສຸຂະໃຈ ກໍມີຈຳນວນ ໖໓ ດວງ ໄດ້ແກ່

**ສຸຂະກາຍ** **໑ ດວງ** ໄດ້ແກ່ ສຸຂະສຫຄຕ ກຸສົລວິບາກ ກາຍວິຍຍານ ໑

**ສຸຂະໃຈ** **໖໒ ດວງ** ໄດ້ແກ່ ກາມໂສມນັສ ໑໘ ຊານໂສມນັສ ໔໔

**ກາມໂສມນັສ** **໑໘ ດວງ** ໄດ້ແກ່ ໂສມນັສ ໂລພະມູລຈິດ ໔

ໂສມນັສ ສັນຕີຣິຈິດ ໑

ໂສມນັສ ຫສິຕຸປປາທະ ໑

ໂສມນັສ ມຫາກຸສົລ ໔

ໂສມນັສ ມຫາວິບາກ ໔

ໂສມນັສ ມຫາກິຣິຍາ ໔

**ຊານໂສມນັສ** **໔໔ ດວງ** ໄດ້ແກ່ ປະຖົມຊານ ໑໑ ທຸຕິຍຊານ ໑໑ ຕະຕິຍຊານ ໑໑ ຈະຕຸດຖະຊານ ໑໑

**ປະຖົມຊານ** **໑໑ ດວງ** ໄດ້ແກ່ ໂລກີຍປະຖົມຊານ ໓ ໂລກຸດຕະຣະປະຖົມຊານ ໘

**ໂລກີຍປະຖົມຊານ** **໓ ດວງ** ໄດ້ແກ່ ປະຖົມຊານກຸສົລຈິດ ໑ ປະຖົມຊານວິບາກຈິດ ໑ ປະຖົມຊານກິຣິຍາຈິດ ໑

**ໂລກຸດຕະຣະປະຖົມຊານ** **໘ ດວງ** ໄດ້ແກ່ ປະຖົມຊານໂສດາປັດຕິມັຄຄະຈິດ ໑ ຜົລຈິດ ໑

ປະຖົມຊານສກທາຄາມິມັຄຄະຈິດ ໑ ຜົລຈິດ ໑

ປະຖົມຊານອນາຄາມິມັຄຄະຈິດ ໑ ຜົລຈິດ ໑

ປະຖົມຊານອຣຫັຕຕມັຄຄະຈິດ ໑ ຜົລຈິດ ໑

**ທຸຕິຍຊານ ໑໑ ຕະຕິຍຊານ ໑໑ ຈະຕຸດຖະຊານ ໑໑** ກໍແຈກຕາມນັຍທີ່ສະແດງ ແລ້ວນີ້

໒. **ຈິດທີ່ເກີດພ້ອມກັບທຸກຂະເວທນາ** ຄື ທັງທຸກຂ໌ກາຍແລະທຸກຂ໌ໃຈ ມີຈຳນວນ ໓ ດວງ ໄດ້ແກ່

ທຸກຂ໌ກາຍ ໑ ດວງ ຄືທຸກຂະສຫຄຕ ອກຸສົລວິບາກ ກາຍວິຍຍານ ໑

ທຸກຂ໌ໃຈ ໒ ດວງ ຄືໂທສະມູລຈິດ ໒ ຊຶ່ງຕ້ອງເກີດພ້ອມກັບໂທມນັສເວທນາສເມີໄປ

໓. **ຈິດທີ່ເກີດພ້ອມກັບອທຸກຂະມສຸຂະເວທນາ** ຄື **ບໍ່ທຸກຂ໌ແລະບໍ່ສຸຂ** ຫລື **ອຸເບກຂາເວທນາ** ນັ້ນເອງ ມີ ໕໕ ດວງ ໄດ້ແກ່:

| | | |
|---|---|---|
| | ອຸເປກຂາ ໂລກມູລຈິດ | ໔ |
| | ໂມຫມູລຈິດ | ໒ |
| | ອຸເປກຂາ ອເຫຕຸກຈິດ | ໑໔ |
| | ອຸເປກຂາ ກາມາວຈຣໂສກຕຈິດ | ໑໒ |
| | ຊານອຸເປກຂາ ຫລື ປັນຈມຊານ | ໒໓ |
| **ປັນຈມຊານ ໒໓** ໄດ້ແກ່ | ໂລກີຍປັນຈມຊານ | ໑໕ |
| | ໂລກຸຕຕຣປັນຈມຊານ | ໘ |
| **ໂລກີຍປັນຈມຊານ ໑໕** ຄື | ໂລກີຍ ຣູປາວຈຣປັນຈມຊານ | ໓ |
| | ໂລກີຍອຣູປາວຈຣ | ໑໒ |
| **ໂລກຸຕຕຣປັນຈມຊານ ໘** ຄື | ປັນຈມຊານໂສດາປັດຕິມັຄຄຈິດ | ໑ ຜົລຈິດ ໑ |
| | ປັນຈມຊານສກທາຄາມີມັຄຄຈິດ | ໑ ຜົລຈິດ ໑ |
| | ປັນຈມຊານອນາຄາມີມັຄຄຈິດ | ໑ ຜົລຈິດ ໑ |
| | ປັນຈມຊານອຣຫັຕຕມັຄຄຈິດ | ໑ ຜົລຈິດ ໑ |

## ເວທນາ ໕

໔. ສຸຂເມກຕຸຖ ທຸກ຺ຂໝ຺ຈ    ໂທມນສ຺ສໍ ທຸວເຢ ກິຕ໌

ທ຺ວາສຝຸກິສຸ ໂສມນສ຺ສໍ    ປຍ຺ຈປຍ຺ຍາສເກຕຣາ ໆ

ແປລຄວາມວ່າ ສຸຂເວທນາ ໑, ທຸກຂເວທນາ ໑, ໂທມນັສເວທນາ ໒, ໂສມນັສເວທນາ ໖໒, ອຸເປກຂາເວທນາ ໕໕

ກ່າວໂດຍ **ອິນທຣິຢເພທນັຍ** ນັ້ນ ຈຳແນກຈິຕໂດຍເວທນາ ໕ ຕາມປຣະເພທແຫ່ງ ຄວາມເປັນໃຫຍ່ໃນການສເວີຍອາຣົມຕ໌ນັ້ນ ໄດ້ດັ່ງນີ້

໑. ຈິຕທີ່ເກີດພ້ອມກັບ **ສຸຂເວທນາ** ຄືຈະເພາະສຸຂກາຍກໍ່ມີດວງດຽວ ໄດ້ແກ່ ສຸຂສຫຄຕ ກຸສົລວິບາກກາຍວິຍຍານ ໑

໒. ຈິຕທີ່ເກີດພ້ອມກັບ **ທຸກຂເວທນາ** ຄືຈະເພາະທຸກຂ໌ກາຍກໍ່ມີດວງດຽວ ໄດ້ແກ່ ທຸກຂສຫຄຕ ອກຸສົລວິບາກກາຍວິຍຍານ ໑

໓. ຈິຕທີ່ເກີດພ້ອມກັບ **ໂສມນັສເວທນາ** ຄືສຸຂໃຈ ມີ ໖໒ ດວງ ກາມໂສມນັສ ໑໘ ຊານໂສມນັສ ໔໔

໔. ຈິຕທີ່ເກີດພ້ອມກັບ **ໂທມນັສເວທນາ** ຄືທຸກຂ໌ໃຈ ມີ ໒ ດວງ ໄດ້ແກ່ ໂທສມູລຈິຕ ໒

໕. ຈິດທີ່ເກີດພ້ອມກັບ **ອຸເບກຂາເວທນາ** ຄືເສີຍໆ ບໍ່ທຸກຂ໌ແລະກໍບໍ່ສຸຂ ມີ ໕໕ ດວງ ໄດ້ແກ່ ອຸເບກຂາໂລກມູລຈິດ ໔ ໂມຫມູລຈິດ ໒ ອຸເບກຂາ ອເຫຕຸກຈິດ ໑໔ ອຸເບກຂາ ກາມາວຈຣໂສກຕຈິດ ໑໒ ຊານອຸເບກຂາ ໒໓ ອທຸກຂມສຸຂເວທນາ (ໃນເວທນາ ໓) ກັບ ອຸເບກຂາເວທນາ ເປັນເວທນາດຽວກັນ ມີອັຕຖະ ຄື ເນື້ອຄວາມຢ່າງດຽວກັນ ຕ່າງກັນແຕ່ ພຍັຍຊນະ ເທົ່ານັ້ນ

**ສຣຸປ**

| **ເວທນາ ໕** | **ເວທນາ ໓** |
|---|---|
| ສຸຂເວທນາ = ສຸຂກາຍ ໑<br>ໂສມນັສເວທນາ = ສຸຂໃຈ ໖໒ | ຣວມ ໖໓ ເປັນ ສຸຂເວທນາ |
| ທຸກຂເວທນາ = ທຸກຂ໌ກາຍ ໑<br>ໂທມນັສເວທນາ = ທຸກຂ໌ໃຈ ໒ | ຣວມ ໓ ເປັນ ທຸກຂເວທນາ |
| ອຸເບກຂາເວທນາ = ລ້າໆ ໕໕ | ຄົງ ໕໕ ເປັນ ອທຸກຂມສຸຂເວທນາ |

ທີ່ກ່າວມາແລ້ວນີ້ ເປັນການສະແດງເວທນາຂອງຈິດໂດຍພິສດາຣ ໑໒໑ ດວງ ຕໍ່ໄປນີ້ ຈະສະແດງເວທນາຂອງຈິດໂດຍຫຍໍ້ ໘໙ ດວງ ໂດຍປຽບທຽບກັບ ໑໒໑ ດວງ ດັ່ງນີ້

**ຈຳແນກໂດຍເວທນາ ໓**

| **ຈິຕໂດຍພິສດາຣ ໑໒໑** | | **ຈິຕໂດຍຫຍໍ້ ໘໙** | |
|---|---|---|---|
| ສຸຂເວທນາ | ໖໓ | ສຸຂເວທນາ | ໓໑ |
| ທຸກຂເວທນາ | ໓ | ທຸກຂເວທນາ | ໓ |
| ອທຸກຂມສຸຂເວທນາ | ໕໕ | ອທຸກຂມສຸຂເວທນາ | ໕໕ |

ທີ່ສຸຂເວທນາເຫລືອພຽງ ໓໑ ເພາະຕັດໂລກຸຕຕຣປຖົມຊານ ໘, ໂລກຸຕຕຣທຸຕິຍຊານ ໘, ໂລກຸຕຕຣຕຕິຍຊານ ໘, ໂລກຸຕຕຣຈຕຸຕຖຊານ ໘ ຣວມ ໓໒ ດວງ ຊຶ່ງເປັນຈິຕພິສດາຣ ອອກເສັຽຈາກ ໖໓ ຈຶ່ງເຫລືອພຽງ ໓໑

ທີ່ເຫລືອພຽງ ໓໑ ນັ້ນໄດ້ແກ່ ສຸຂກາຍວິญญาณ ໑, ກາມໂສມນັສ ໑໘ ແລະໂລກິຍຊານໂສມນັສ ໑໒ ຄື ໂລກິຍປຖົມຊານ ໓, ໂລກິຍທຸຕິຍຊານ ໓, ໂລກິຍຕຕິຍຊານ ໓, ໂລກິຍຈຕຸຕຖຊານ ໓

ທີ່ອທຸກຂມສຸຂເວທນາ ໄດ້ແກ່ ຈິຕ ໕໕ ເທົ່າກັນທັ້ງ ໒ ຂ້າງນັ້ນ ເປັນເພາະທາງຈິຕ ພິສດາຣຫມາຍເຖິງປັນຈມຊານໂລກຸຕຕຈິຕ ໘ ດວງ ສ່ວນທາງຈິຕໂດຍຫຍໍ້ຫມາຍເຖິງໂລກຸຕຕຣ ຈິຕໂດຍຫຍໍ້ ໘ ດວງ ຊຶ່ງມີຈຳນວນເທົ່າກັນ

ອີກໜຶ່ງໂລກຸຕຕະຈິດໂດຍຫຍໍ້ ໘ ດວງນັ້ນ ໃນທີ່ນີ້ນັບເປັນອທຸກຂະມະສຸຂະເວທະນາ ຄື ອຸເບກຂາເວທະນາທັງ ໘ ດວງ

**ຈຳແນກໂດຍເວທະນາ ໕**

| ຈິດໂດຍພິສດານ ໑໒໑ | | ຈິດໂດຍຫຍໍ້ ໘໙ | |
|---|---|---|---|
| ສຸຂະເວທະນາ | ໑ | ສຸຂະເວທະນາ | ໑ |
| ທຸກຂະເວທະນາ | ໑ | ທຸກຂະເວທະນາ | ໑ |
| ໂສມນັສເວທະນາ | ໖໒ | ໂສມນັສເວທະນາ | ໓໐ |
| ໂທມນັສເວທະນາ | ໒ | ໂທມນັສເວທະນາ | ໒ |
| ອຸເບກຂາເວທະນາ | ໕໕ | ອຸເບກຂາເວທະນາ | ໕໕ |

**ເວທະນາກັບເຈຕສິກ**

ເວທະນາເຈຕສິກ ມີການສະແດງເປັນ ໒ ນັຍ ຄື

ກ. ສະແດງວ່າ ເວທະນາໃດເກີດກັບເຈຕສິກອັນໃດໄດ້ແດ່

ຂ. ສະແດງວ່າ ເຈຕສິກໃດເກີດກັບເວທະນາໃດໄດ້ແດ່

**ກ. ເວທະນາເກີດກັບເຈຕສິກ**

**ສຸຂະເວທະນາ** ເກີດໄດ້ກັບ ສັພພະຈິດຕະສາທາຣະນະເຈຕສິກ ໖ (ເວັ້ນເວທະນາເຈຕສິກ)

**ທຸກຂະເວທະນາ** ເກີດໄດ້ກັບ ສັພພະຈິດຕະສາທາຣະນະເຈຕສິກ ໖ (ເວັ້ນເວທະນາເຈຕສິກ)

**ໂສມນັສເວທະນາ** ເກີດໄດ້ກັບ ເຈຕສິກ ໔໖ ດວງຄື

ອັນຍະສະມານາເຈຕສິກ ໑໒ (ເວັ້ນເວທະນາ ເຈຕສິກ)

ອະກຸສົລເຈຕສິກ ໙ (ເວັ້ນໂທຈະຕຸກະ ໔ ວິຈິກິຈຈາເຈຕສິກ ໑)

ໂສພະນະ ເຈຕສິກ ໒໕

**ໂທມນັສເວທະນາ** ເກີດໄດ້ກັບ ເຈຕສິກ ໒໑ ດວງ ຄື

ອັນຍະສະມານາເຈຕສິກ ໑໑ (ເວັ້ນ ເວທະນາປີຕິ)

ອະກຸສົລເຈຕສິກ ໑໐ (ເວັ້ນໂລພະກະ ໓ ວິຈິກິຈຈາເຈຕສິກ ໑)

**ອຸເບກຂາເວທະນາ** ເກີດໄດ້ກັບ ເຈຕສິກ ໔໖ ດວງ ຄື

ອັນຍະສະມານາເຈຕສິກ ໑໑ (ເວັ້ນ ເວທະນາປີຕິ)

| | |
|---|---|
| ອກຸສົລເຈຕສິກ | ໑໐ (ເວັ້ນໂທຈຕຸກະ ໔) |
| ໂສກຕເຈຕສິກ | ໒໕ |

## ຂ. ເຈຕສິກທີ່ເກີດພ້ອມກັບເວທນາ

໑. ເຈຕສິກທີ່ເກີດພ້ອມກັບ **ເວທນາຢ່າງດຽວ** ມີ ໖ ດວງ ຄື

| | |
|---|---|
| ໂທຈຕຸກເຈຕສິກ | ໔ ເກີດພ້ອມກັບ ໂທມນັສເວທນາ ຢ່າງດຽວ |
| ປິຕິເຈຕສິກ | ໑ ເກີດພ້ອມກັບ ໂສມນັສເວທນາ ຢ່າງດຽວ |
| ວິຈິກິຈຉາເຈຕສິກ | ໑ ເກີດພ້ອມກັບ ອຸເບກຂາເວທນາ |

໒. ເຈຕສິກທີ່ເກີດພ້ອມກັບ ເວທນາ ໒ ມີ ໒໗ ດວງ ຄື

| | |
|---|---|
| ໂລຕິກເຈຕສິກ | ໓ ເກີດພ້ອມກັບໂສມນັສເວທນາກໍໄດ້ ອຸເບກຂາເວທນາກໍໄດ້ |
| ໂສກຕເຈຕສິກ | ໒໕ ເກີດພ້ອມກັບໂສມນັສເວທນາກໍໄດ້ ອຸເບກຂາເວທນາກໍໄດ້ |

໓. ເຈຕສິກທີ່ເກີດພ້ອມກັບ ເວທນາ ໓ ມີ ໑໑ ດວງ ຄື

| | | |
|---|---|---|
| ໂມຈຕຸກເຈຕສິກ | ໔ | **ເຈຕສິກ ໑໑ ດວງນີ້** ເກີດພ້ອມກັບ ໂສມນັສເວທນາ ໂທມນັສເວທນາ ຫລື ອຸເບກຂາເວທນາຢ່າງໃດກໍໄດ້! |
| ຖີນມິທລເຈຕສິກ | ໒ | |
| ວິຕົກເຈຕສິກ | ໑ | |
| ວິຈາຣເຈຕສິກ | ໑ | |
| ອធិໂມກຂເຈຕສິກ | ໑ | |
| ວິຣິຢເຈຕສິກ | ໑ | |
| ຈັນທເຈຕສິກ | ໑ | |

໔. ເຈຕສິກທີ່ເກີດພ້ອມກັບ ເວທນາ ໕ ມີ ໖ ດວງຄື

ສັພພຈິຕຕສາລາຣຕເຈຕສິກ ໖ (ເວັ້ນເວທນາເຈຕສິກ)

໕. ເຈຕສິກທີ່ບໍ່ເກີດພ້ອມກັບເວທນາ ມີ ໑ ດວງ ຄື

ເວທນາເຈຕສິກ

## ຫມວດທີ່ ໔ ເຫຕຸສັງຄະຫະ

ເຫຕຸ ຄື ທັມມ໌ທີ່ເປັນຮາກເຫງົ້າເຄົ້າມູລທີ່ໃຫ້ຈິດເປັນອກຸສົລ ເປັນກຸສົລ ຫລືເປັນອພຍາກຕະ ເຫຕຸສັງຄະຫະ ເປັນການຮວບຮວມ ສະແດງເຣື່ອງເຫຕຸ ມີຄາຖາສັງຄະຫະ ເປັນຄາຖາທີ່ ໕ ສະແດງວ່າ

໕. ໂລໂກ ໂທໂສ ຈ ໂມໂຫ ຈ ເຫຕູ ອກຸສລາ ຕໂຍ
ອໂລກາໂທສາໂມໂຫ ຈ ກຸສລາພຸຢາກຕາ ຕຖາ ຯ

ແປລຄວາມວ່າ **ໂລພະ ໂທສະ ໂມຫະ** ເປັນອກຸສົລເຫຕຸ **ອໂລພະ ອໂທສະ ອໂມຫະ** ເປັນກຸສົລເຫຕຸ ແລະ ອພຍາກຕເຫຕຸ

## ອະທິບາຍ

**ເຫຕຸ ມີ ໖ ເຫຕຸ** ຄື ໂລກເຫຕຸ ໂທສເຫຕຸ ໂມຫເຫຕຸ ອໂລກເຫຕຸ ອໂທສເຫຕຸ ແລະ ອໂມຫເຫຕຸ

| | | |
|---|---|---|
| ໂລກເຫຕຸ | ອົງຄ໌ທັມມ໌ໄດ້ແກ່ | ໂລກເຈຕສິກ |
| ໂທສເຫຕຸ | ອົງຄ໌ທັມມ໌ໄດ້ແກ່ | ໂທສເຈຕສິກ |
| ໂມຫເຫຕຸ | ອົງຄ໌ທັມມ໌ໄດ້ແກ່ | ໂມຫເຈຕສິກ |
| ອໂລກເຫຕຸ | ອົງຄ໌ທັມມ໌ໄດ້ແກ່ | ອໂລກເຈຕສິກ |
| ອໂທສເຫຕຸ | ອົງຄ໌ທັມມ໌ໄດ້ແກ່ | ອໂທສເຈຕສິກ |
| ອໂມຫເຫຕຸ | ອົງຄ໌ທັມມ໌ໄດ້ແກ່ | ປັຍຍາເຈຕສິກ |

**ໂລກເຫຕຸ ໂທສເຫຕຸ ໂມຫເຫຕຸ** ເປັນເຈຕສິກ ໓ ດວງ ເປັນ ອກຸສົລເຈຕສິກ ເມື່ອ ເຈຕສິກທັ້ງ ໓ ຄືເຫຕຸທັ້ງ ໓ ນີ້ປຣະກອບກັບຈິຕ ກໍເປັນມູລຖານໃຫ້ຈິຕເປັນອກຸສົລ ອັນເປັນຈິຕທີ່ຊົ່ວທີ່ບາປ ເປັນຈິຕທີ່ມີໂທສ ແລະຈັກໃຫ້ຜົລເປັນທຸກຂ໌ ດັ່ງນັ້ນ ໂລກເຫຕຸ ໂທສເຫຕຸ ໂມຫເຫຕຸ ຈຶ່ງໄດ້ຊື່ວ່າເປັນ ອກຸສົລເຫຕຸ ອກຸສົລເຫຕຸປຣະກອບກັບຈິຕໃດ ຈິຕນັ້ນກໍເປັນ **ອກຸສົລຈິຕ**

**ອໂລກເຫຕຸ ອໂທສເຫຕຸ ອໂມຫເຫຕຸ** ເປັນໂສກຕເຈຕສິກທັ້ງ ໓ ດວງ ເມື່ອເຈຕສິກທັ້ງ ໓ ຄືເຫຕຸທັ້ງ ໓ ນີ້ປຣະກອບກັບຈິຕ ກໍເປັນມູລຖານໃຫ້ຈິຕເປັນໂສກຕ ເປັນຈິຕທີ່ດີງາມ ເອີ້ນວ່າ **ໂສກຕຈິຕ**

**ອໂລກເຫຕຸ ອໂທສເຫຕຸ ອໂມຫເຫຕຸ** ປຣະກອບກັບໂສກຕຈິຕປຣະເພທກຸສົລ ເປັນຈິຕທີ່ດີ ງາມ ສລາດ ເປັນຈິຕທີ່ ປຣາສຈາກໂທຫ ແລະຈັກໃຫ້ຜົລເປັນສຸຂດ້ວຍ ດັ່ງນັ້ນ ອໂລກເຫຕຸ ອໂທສເຫຕຸ ອໂມຫເຫຕຸ ທີ່ປຣະກອບກັບ ກຸສົລຈິຕທັ້ງປວງ ຈຶ່ງໄດ້ຊື່ວ່າເປັນ **ກຸສົລເຫຕຸ**

**ອໂລພເຫຕຸ ອໂທສເຫຕຸ ອໂມຫເຫຕຸ** ປຣະກອບກັບໂສພາຈິຕປຣະເພທວິບາກແລະກິຣິຍາ ອັນຮອມເອີ້ນວ່າ ອພຍາກຕຈິຕ ເປັນຈິຕທີ່ດີ ງາມ ສລາດ ປຣາສຈາກໂທພຄືກັນ ແຕ່ ບໍ່ເປັນບຸນ ບໍ່ເປັນບາປ ເພາະບໍ່ສາມາຖໃຫ້ເກີດຜົລ ຢ່າງໃດຂຶ້ນມາໄດ້ ດັ່ງນັ້ນ ອໂລພເຫຕຸ ອໂທສເຫຕຸ ອໂມຫເຫຕຸ ທີ່ປຣະກອບກັບວິບາກຈິຕຫລືກິຣິຍາຈິຕທັ້ງຫລາຍ ຈຶ່ງໄດ້ຊື່ ວ່າເປັນ **ອພຍາກຕເຫຕຸ**

ຮອມໄດ້ຄວາມວ່າ ເມື່ອກ່າວເຖິງຈຳນວນເຫຕຸໂດຍປຣະເພທທີ່ປຣະກອບກັບຈິຕກໍ່ມີ ໙ ເຫຕຸ ຄື

**ອກຸສົລເຫຕຸ** ມີ ໓ ໄດ້ແກ່ ໂລພເຫຕຸ ໂທສເຫຕຸ ໂມຫເຫຕຸ
**ກຸສົລເຫຕຸ** ມີ ໓ ໄດ້ແກ່ ອໂລພເຫຕຸ ອໂທສເຫຕຸ ອໂມຫເຫຕຸ
**ອພຍາກຕເຫຕຸ** ມີ ໓ ໄດ້ແກ່ ອໂລພເຫຕຸ ອໂທສເຫຕຸ ອໂມຫເຫຕຸ

ຖ້າກ່າວເຖິງ ຈຳນວນເຫຕຸໂດຍປຣະເພທແຫ່ງອົງຄ໌ທັມມ໌ແລ້ວ ກໍ່ມີ ໖ ເຫຕຸ ຄື ໂລພ ເຫຕຸ ໂທສເຫຕຸ ໂມຫເຫຕຸ ອໂລພເຫຕຸ ອໂທສເຫຕຸ ອໂມຫເຫຕຸ

## ເຫຕຸ ກັບ ຈິຕ

ເຫຕຸທີ່ປຣະກອບກັບຈິຕ ຈິຕທັ້ງຫມົດມີ ໘໙ ດວງ ຫລື ໑໒໑ ດວງ ແບ່ງເປັນ ໒ ປຣະເພທ ຄື ຈິຕທີ່ມີເຫຕຸປຣະກອບ ກັບ ຈິຕທີ່ບໍ່ມີເຫຕຸປຣະກອບ

ກ. **ອເຫຕຸກຈິຕ** ເປັນຈິຕທີ່ບໍ່ມີເຫຕຸປຣະກອບ (ບໍ່ມີສັມປຢຸຕຕເຫຕຸ) ຄື ບໍ່ມີເຫຕຸ ໖ ປຣະກອບເລີຍແມ້ແຕ່ ເຫຕຸດຽວ

ຂ. **ສເຫຕຸກຈິຕ** ເປັນຈິຕທີ່ມີສັມປຢຸຕຕເຫຕຸ ຄື ມີເຫຕຸ ໖ ປຣະກອບຢ່າງນ້ອຍທີ່ສຸດ ກໍ່ ໑ ເຫຕຸ ແລະຢ່າງ ຫລາຍບໍ່ເກີນ ໓ ເຫຕຸ

***ມີຄາຖາສັງຄຫະເປັນຄາຖາທີ່ ໖ ສະແດງວ່າ***

໖. ອເຫຕຸກາຕ຺ຖາຣເສກ ເຫຕຸກາ ເຫ຺ວ ທ຺ວາວີສຕິ
ທ຺ວິເຫຕຸກາ ມຕາ ສຕ຺ຕ ຈຕ຺ຕາຣີສ ຕິເຫຕຸກາ ຯ

ແປລຄວາມວ່າ ອເຫຕຸກຈິຕ ມີ ໑໘
ເອກເຫຕຸກຈິຕ ມີ ໒
ທວິເຫຕຸກຈິຕ ມີ ໒໒
ຕິເຫຕຸກຈິຕ ມີ ໔໗

## ອະທິບາຍ

໑. **ອະເຫຕຸກະຈິດ** ເປັນຈິດທີ່ບໍ່ມີສັມປະຍຸດຕະເຫຕຸ ຄື ບໍ່ມີເຫຕຸ ໆ ປະກອບເລີຍແມ້ແຕ່ ເຫຕຸດຽວ **ອະເຫຕຸກະຈິດ ມີ ໑໘ ດວງ** ໄດ້ແກ່

| | |
|---|---|
| ປັນຈະທວາຣາວັຊຊະນະຈິດ | ໑ |
| ທະວິປັນຈະວິນຍານະຈິດ | ໑໐ |
| ສັມປະຕິຈັນນະຈິດ | ໒ |
| ສັນຕີຣະນະຈິດ | ໓ |
| ມະໂນທວາຣາວັຊຊະນະຈິດ | ໑ |
| ຫະສິຕຸປປາທະຈິດ | ໑ |

໒. **ເອກະເຫຕຸກະຈິດ** ຈິດທີ່ມີເຫຕຸປະກອບພຽງເຫຕຸດຽວ ເປັນຈິດທີ່ມີສັມປະຍຸດຕະເຫຕຸ ເປັນສະເຫຕຸກະຈິດ ເອກະເຫຕຸກະຈິດ ມີ ໒ ດວງ ໄດ້ແກ່

ໂມຫະມູລະຈິດ ໒ ຊຶ່ງເປັນຈິດທີ່ມີເຫຕຸປະກອບພຽງເຫຕຸດຽວ ຄື **ໂມຫະເຫຕຸ**

໓. **ທະວິເຫຕຸກະຈິດ** ຈິດທີ່ມີເຫຕຸປະກອບ ໒ ເຫຕຸ ເປັນຈິດທີ່ມີສັມປະຍຸດຕະເຫຕຸ ເປັນ ສະເຫຕຸກະຈິດ ທະວິເຫຕຸກະຈິດ ມີ ໒໒ ດວງ ໄດ້ແກ່

| | | |
|---|---|---|
| **ໂລພະມູລະຈິດ** | **໘** | ມີເຫຕຸປະກອບ ໒ ເຫຕຸ ຄື ໂລພະເຫຕຸ ໂມຫະເຫຕຸ |
| **ໂທສະມູລະຈິດ** | **໒** | ມີເຫຕຸປະກອບ ໒ ເຫຕຸ ຄື ໂທສະເຫຕຸ ໂມຫະເຫຕຸ |
| **ມະຫາກຸສະລະຍານະວິປປະຍຸດຕະ** | **໔** | ມີເຫຕຸປະກອບ ໒ ເຫຕຸ ຄື ອະໂລພະເຫຕຸ ອະໂທສະເຫຕຸ |
| **ມະຫາວິປາກະຍານະວິປປະຍຸດຕະ** | **໔** | ມີເຫຕຸປະກອບ ໒ ເຫຕຸ ຄື ອະໂລພະເຫຕຸ ອະໂທສະເຫຕຸ |
| **ມະຫາກິຣິຍາຍານະວິປປະຍຸດຕະ** | **໔** | ມີເຫຕຸປະກອບ ໒ ເຫຕຸ ຄື ອະໂລພະເຫຕຸ ອະໂທສະເຫຕຸ |

໔. **ຕິເຫຕຸກະຈິດ** ຈິດທີ່ມີເຫຕຸປະກອບ ໓ ເຫຕຸ ເປັນຈິດທີ່ມີສັມປະຍຸດຕະເຫຕຸ ເປັນ ສະເຫຕຸກະຈິດ ຕິເຫຕຸກະຈິດ ມີ ໔໗ ຫລື ໗໙ ດວງ ໄດ້ແກ່

| | |
|---|---|
| **ມະຫາກຸສົລ ຍານສັມປະຍຸຕຕະຈິຕ ໔**<br>**ມະຫາວິປາກ ຍານສັມປະຍຸຕຕະຈິຕ ໔**<br>**ມະຫາກິຣິຍາ ຍານສັມປະຍຸຕຕະຈິຕ ໔**<br>**ມະຫັຄຄະຕະຈິຕ ໒໗**<br>**ໂລກຸຕຕະຈິຕ ໘ ຫລື ໔໐** | ມີເຫຕຸປຣະກອບ ໓ ເຫຕຸ ຄື **ອໂລພເຫຕຸ** **ອໂທສເຫຕຸ** ແລະ **ອໂມຫເຫຕຸ** |

## ຂໍ້ສັງເກຕ

**ອເຫຕຸກຈິຕ** ບໍ່ມີເຫຕຸປຣະກອບເລີຍ

**ອກຸສົລຈິຕ** ມີເຫຕຸປຣະກອບຢ່າງນ້ອຍ ໑ ເຫຕຸ ຢ່າງຫລາຍ ໒ ເຫຕຸ

**ໂສພຕຈິຕ** ມີເຫຕຸປຣະກອບຢ່າງນ້ອຍ ໒ ເຫຕຸ ຢ່າງຫລາຍ ໓ ເຫຕຸ

## ນັບຈຳນວນເຫຕຸ

## ອກຸສົລເຫຕຸ ໓

| | | | |
|---|---|---|---|
| **ໂລພເຫຕຸ** ປຣະກອບໃນ | ໂລພມູລຈິຕ ໘ | **ເປັນ ໘ ເຫຕຸ** | **<u>ຣວມ</u>** ອກຸສົລເຫຕຸ **໒໒ ເຫຕຸ** |
| **ໂທສເຫຕຸ** ປຣະກອບໃນ | ໂທສມູລຈິຕ ໒ | **ເປັນ ໒ ເຫຕຸ** | |
| **ໂມຫເຫຕຸ** ປຣະກອບໃນ | ໂລພມູລຈິຕ ໘<br>ໂທສມູລຈິຕ ໒<br>ໂມຫມູລຈິຕ ໒ | **ເປັນ ໑໒ ເຫຕຸ** | |

## ກຸສົລເຫຕຸ ໓

| | | | |
|---|---|---|---|
| **ອໂລພເຫຕຸ** | ປຣະກອບໃນ ມະຫາກຸສົລ ໘<br>ປຣະກອບໃນ ມະຫັຄຄະຕະກຸສົລ ໕<br>ປຣະກອບໃນ ມັຄຄຈິຕ ໔ | ເປັນ ໘ ເຫຕຸ<br>ເປັນ ໕ ເຫຕຸ<br>ເປັນ ໔ ເຫຕຸ | **ຣວມອໂລພເຫຕຸ ໑໗ ເຫຕຸ** |
| | (ມັຄຄຈິຕຢ່າງພິສດາຣ ໒໐ ກໍ | ເປັນ ໒໐ ເຫຕຸ) | (ຢ່າງພິສດາຣ ໓໓ ເຫຕຸ) |

| | | |
|---|---|---|
| **ອໂທສເຫຕຸ** | ປຣະກອບໃນ ມຫາກຸຨລ ໘ ເປັນ ໘ ເຫຕຸ<br>ປຣະກອບໃນ ມຫັຄຄຕກຸຨລ ໙ ເປັນ ໙ ເຫຕຸ<br>ປຣະກອບໃນ ມັຄຄຈິຕ ໔ ເປັນ ໔ ເຫຕຸ | **ຮວມອໂທສເຫຕຸ ໒໑ ເຫຕຸ** |
| | (ມັຄຄຈິຕຢ່າງພິສດານ ໔໐ ກໍ ເປັນ ໔໐ ເຫຕຸ) | (ຢ່າງພິສດານ ໕໗ ເຫຕຸ) |
| **ອໂມຫເຫຕຸ** | ປຣະກອບໃນມຫາກຸຨລຌາຓສັມປຍຸຕຕ ໔ ເປັນ ໔ ເຫຕຸ<br>ປຣະກອບໃນ ມຫັຄຄຕກຸຨລ ໙ ເປັນ ໙ ເຫຕຸ<br>ປຣະກອບໃນ ມັຄຄຈິຕ ໔ ເປັນ ໔ ເຫຕຸ | **ຮວມອໂມຫເຫຕຸ ໑໗ ເຫຕຸ** |
| | (ມັຄຄຈິຕຢ່າງພິສດານ ໔໐ ກໍ ເປັນ ໔໐ ເຫຕຸ) | (ຢ່າງພິສດານ ໕໓ ເຫຕຸ) |

ຮວມ **ກຸຨລເຫຕຸ** ຄື ອໂລຠເຫຕຸ ໒໑ ອໂທສເຫຕຸ ໒໑ ອໂມຫເຫຕຸ ໑໗ ເປັນ **໕໙ ເຫຕຸ**

**ຢ່າງພິສດານ** ຄື ອໂລຠເຫຕຸ ໕໗ ອໂທສເຫຕຸ ໕໗ ອໂມຫເຫຕຸ ໕໓ ເປັນ **໑໖໗ ເຫຕຸ**

## ອພຍາກຕເຫຕຸ ໓

| | | |
|---|---|---|
| **ອໂລຠເຫຕຸ** | ປຣະກອບໃນ ມຫາວິປາກ ໘ ເປັນ ໘ ເຫຕຸ<br>ປຣະກອບໃນ ມຫາກິຣິຍາ ໘ ເປັນ ໘ ເຫຕຸ<br>ປຣະກອບໃນ ມຫັຄຄຕວິປາກ ໙ ເປັນ ໙ ເຫຕຸ<br>ປຣະກອບໃນ ມຫັຄຄຕກິຣິຍາ ໙ ເປັນ ໙ ເຫຕຸ<br>ປຣະກອບໃນ ຜລຈິຕ ໔ ເປັນ ໔ ເຫຕຸ | ຮວມອໂລຠເຫຕຸ ໓໘ ເຫຕຸ |
| | (ຜລຈິຕຢ່າງພິສດານ ໔໐ ກໍ ເປັນ ໔໐ ເຫຕຸ) | (ຢ່າງພິສດານ ໗໔ ເຫຕຸ) |
| **ອໂທສເຫຕຸ** | ປຣະກອບໃນ ມຫາວິປາກ ໘ ເປັນ ໘ ເຫຕຸ<br>ປຣະກອບໃນ ມຫາກິຣິຍາ ໘ ເປັນ ໘ ເຫຕຸ<br>ປຣະກອບໃນ ມຫັຄຄຕວິປາກ ໙ ເປັນ ໙ ເຫຕຸ<br>ປຣະກອບໃນ ມຫັຄຄຕກິຣິຍາ ໙ ເປັນ ໙ ເຫຕຸ<br>ປຣະກອບໃນ ຜລຈິຕ ໔ ເປັນ ໔ ເຫຕຸ | **ຮວມອໂທສເຫຕຸ ໓໘ ເຫຕຸ** |
| | (ຜລຈິຕຢ່າງພິສດານ ໔໐ ກໍ ເປັນ ໔໐ ເຫຕຸ) | (ຢ່າງພິສດານ ໗໔ ເຫຕຸ) |

| | | |
|---|---|---|
| **ອໂມຫເຫຕຸ** | ປຣະກອບໃນມຫາວິບາກຍາຕສັມປຢຸຕຕ ໔ ເປັນ ໔ ເຫຕຸ<br>ປຣະກອບໃນມຫາກິຣິຍາຍາຕສັມປຢຸຕຕ ໔ ເປັນ ໔ ເຫຕຸ<br>ປຣະກອບໃນ ມຫັຄຄຕວິບາກ ໕ ເປັນ ໕ ເຫຕຸ<br>ປຣະກອບໃນ ມຫັຄຄຕກິຣິຍາ ໕ ເປັນ ໕ ເຫຕຸ<br>ປຣະກອບໃນ ຜົລຈິຕ ໔ ເປັນ ໔ ເຫຕຸ | **ຣວມອໂມຫເຫຕຸ ລ໐ ເຫຕຸ** |
| | (ຜົລຈິຕຢ່າງພິສດາຣ ໒໐ ກໍ ເປັນ ໒໐ ເຫຕຸ) | (ຢ່າງພິສດາຣ ໔໖ ເຫຕຸ) |

ຣວມ **ອພຍາກຕເຫຕຸ** ຄື ອໂລກເຫຕຸ ລໆ ອໂທສເຫຕຸ ລໆ ອໂມຫເຫຕຸ ລ໐ ເປັນ **໑໐໖ ເຫຕຸ**

ຢ່າງ...**ພິສດາຣ** ຄື ອໂລກເຫຕຸ ໕໔ ອໂທສເຫຕຸ ໕໔ ອໂມຫເຫຕຸ ໔໖ ເປັນ **໑໕໔ ເຫຕຸ**

ຣວມ **ອກຸສົລເຫຕຸ** ໑໔ ເຫຕຸ ຢ່າງພິສດາຣກໍ ໑໔ ເຫຕຸ

**ກຸສົລເຫຕຸ** ໕໕ ເຫຕຸ ຢ່າງພິສດາຣກໍ ໑໐໗ ເຫຕຸ

**ອພຍາກຕເຫຕຸ** ໑໐໖ ເຫຕຸ ຢ່າງພິສດາຣກໍ ໑໕໔ ເຫຕຸ

ຣວມ **ເຫຕຸທັ້ງໝົດ** ເປັນ **໑ໆໆ** ເຫຕຸ ຢ່າງພິສດາຣກໍ **໒ໆລ** ເຫຕຸ

## ຄິດຈຳນວນເຫຕຸຢ່າງງ່າຍ

| | |
|---|---|
| ໂລກມູລຈິຕ ໆ ດວງ x ໒ ເຫຕຸ ເປັນ ໑໖ ເຫຕຸ<br>ໂທສມູລຈິຕ ໒ ດວງ x ໒ ເຫຕຸ ເປັນ ໔ ເຫຕຸ<br>ໂມຫມູລຈິຕ ໒ ດວງ x ໑ ເຫຕຸ ເປັນ ໒ ເຫຕຸ | ຣວມ ໑໔ ເຫຕຸ |
| ກາມໂສກຕ ຍາຕວິປປຢຸຕຕ ໑໒ ດວງ x ໒ ເຫຕຸ ເປັນ ໑໔ ເຫຕຸ<br>ກາມໂສກຕ ຍາຕສັມປຢຸຕຕ ໑໒ ດວງ x ລ ເຫຕຸ ເປັນ ລ໖ ເຫຕຸ | ຣວມ ໖໐ ເຫຕຸ |
| ມຫັຄຄຕຈິຕ ໒໗ ດວງ x ລ ເຫຕຸ ເປັນ ໆ໑ ເຫຕຸ<br>ໂລກຸຕຕຈິຕ ໆ ດວງ x ລ ເຫຕຸ ເປັນ ໑໔ ເຫຕຸ<br>(ໂລກຸຕຕຈິຕ ຢ່າງພິສດາຣ ໔໐ x ລ ເປັນ ໑໒໐ ເຫຕຸ) | ຣວມ ໑໐໕ ເຫຕຸ |

ຣວມເຫຕຸໃນ **ອກຸສົລຈິຕ** ມີ ໑໔ ເຫຕຸ

ຣວມເຫຕຸໃນ **ກາມໂສກຕຈິຕ** ມີ ໖໐ ເຫຕຸ

ຣວມເຫຕຸໃນ **ມຫັຄຄຕຈິຕ** ມີ ໆ໑ ເຫຕຸ

ຣວມເຫຕຸໃນ **ໂລກຸຕຕຈິຕ** ມີ ໑໔ ເຫຕຸ ຫລື ໑໒໐ ເຫຕຸ

**ຣວມເຫຕຸທັ້ງໝົດ** ມີ ໑ໆໆ ເຫຕຸ ຫລື ໒ໆລ ເຫຕຸ

# ເຫຕຸກັບເຈຕສິກ

ເຫຕຸກັບເຈຕສິກນີ້ ເປັນການສະແດງວ່າ ເຈຕສິກໃດມີເຫຕຸຫຍັງແດ່ ຫລືວ່າ ເຈຕສິກໃດ? ເກີດພ້ອມກັບເຫຕຸອັນໃດ ໄດ້ແດ່ ມີສະແດງເປັນ ໒ ນັຍ ມີຊື່ວ່າ **ອຄຫິຕັຄຄຫຓນັຍ** ແລະ **ຄຫິຕັຄຄຫຓນັຍ**

**ອຄຫິຕັຄຄຫຓນັຍ** ຄື ນັບແລ້ວບໍ່ນັບອີກ ຫມາຍຄວາມວ່າ ທັມມ໌ໃດເຈຕສິກໃດທີ່ໄດ້ຍົກເປັນຫົວຂໍ້ຂຶ້ນສະແດງແລ້ວ ຍົກມາກ່າວແລ້ວຈະບໍ່ນຳມາສະແດງ ບໍ່ນຳມາກ່າວອ້າງ ບໍ່ນຳມານັບຊ້ຳອີກ

**ຄຫິຕັຄຄຫຓນັຍ** ຄື ນັບແລ້ວນັບອີກ ຫມາຍຄວາມວ່າ ທັມມ໌ໃດເຈຕສິກໃດທີ່ໄດ້ຍົກເປັນຫົວຂໍ້ຂຶ້ນສະແດງແລ້ວ ຍົກມາກ່າວອ້າງແລ້ວ ກໍ່ຍັງຈະຕ້ອງນຳມາສະແດງ ຍົກມາກ່າວອ້າງ ນຳມານັບຊ້ຳອີກ

# ອຄຫິຕັຄຄຫຓນັຍ

໑. ເຈຕສິກທີ່ມີ ເຫຕຸດຽວ ມີ ໓ ດວງ ໄດ້ແກ່ **ໂລກະ ໂທສະ ວິຈິກິຈຉາ**

໒. ເຈຕສິກທີ່ມີ ໒ ເຫຕຸ ມີ ໙ ດວງ ໄດ້ແກ່ **ໂມຫະ ທິຏຖິ ມານະ ອິສສາ ມັຈຉຣິຍະ ກຸກກຸຈຈະ ອໂລກະ ອໂທສະ ປັຌຌາ**

໓. ເຈຕສິກທີ່ມີ ໓ ເຫຕຸ ມີ ໒໗ ດວງ ໄດ້ແກ່ **ອຫິຣິກະ ອໂນຕັປປະ ອຸທລັຈຈະ ຖີນະ ມິທຘະ ແລະ ໂສກຓເຈຕສິກ ໒໒** (ເວັ້ນ **ອໂລກະ ອໂທສະ ປັຌຌາ)**

໔. ເຈຕສິກທີ່ມີ ໕ ເຫຕຸ ມີ ໑ ດວງ ໄດ້ແກ່ **ປີຕິ**

໕. ເຈຕສິກທີ່ມີ ໖ ເຫຕຸ ມີ ໑໒ ດວງ ໄດ້ແກ່ **ອັຌຌສມານາເຈຕສິກ ໑໒** (ເວັ້ນ**ປີຕິ**)

## ອະທິບາຍ

ໃນຂໍ້ ໑ **ໂລກເຈຕສິກ** ຈະຕ້ອງເກີດພ້ອມກັບໂມຫະຢ່າງແນ່ນອນ ຈະເກີດແຕ່ລຳພັງໂດຍບໍ່ມີໂມຫະບໍ່ໄດ້ ດັ່ງນັ້ນ ຈຶ່ງກ່າວໄດ້ວ່າໂລກເຈຕສິກມີເຫຕຸດຽວ ຄື **ໂມຫເຫຕຸ**

**ໂທສເຈຕສິກ**ກໍດີ **ວິຈິກິຈຉາເຈຕສິກ**ກໍດີ ກໍຈະຕ້ອງເກີດກັບໂມຫະເຊັ່ນດຽວກັນ ດັ່ງນັ້ນໂທສເຈຕສິກຈຶ່ງມີເຫຕຸດຽວ ຄື ໂມຫເຫຕຸ ແລະວິຈິກິຈຉາເຈຕສິກ ກໍມີເຫຕຸດຽວ ຄື **ໂມຫເຫຕຸ**

ໃນຂໍ້ ໒ **ໂມຫເຈຕສິກ** ເປັນເຈຕສິກທີ່ມີ ໒ ເຫຕຸ ເພາະວ່າໂມຫເຈຕສິກທີ່ເກີດພ້ອມກັບໂລກະກໍມີໂລກເຫຕຸເປັນເຫຕຸ ເມື່ອໂມຫເຈຕສິກເກີດພ້ອມກັບໂທສະ ກໍມີໂທສະເຫຕຸເປັນເຫຕຸ ຮວມຄວາມວ່າ ໂມຫເຈຕສິກມີໂລກເຫຕຸເປັນເຫຕຸກໍໄດ້ ມີໂທສເຫຕຸເປັນເຫຕຸກໍໄດ້ ດັ່ງນັ້ນຈຶ່ງໄດ້ຊື່ວ່າ **ໂມຫເຈຕສິກ ມີ ໒ ເຫຕຸ**

**ທິຕຖິເຈຕະສິກ** ກັບ **ມານເຈຕະສິກ** ຣວມ ໒ ດວງນີ້ຈະຕ້ອງເກີດພ້ອມກັບໂລພະ ໂລພະກໍຕ້ອງເກີດພ້ອມກັບໂມຫະ ເປັນອັນວ່າ ທິຕຖິເຈຕະສິກກໍດີ ມານເຈຕະສິກກໍດີ ແຕ່ລະດວງຕ່າງກໍຈະຕ້ອງເກີດພ້ອມກັບໂລພະແລະໂມຫະ ດັ່ງນັ້ນ ທິຕຖິ ມານະ ເປັນ ເຈຕະສິກທີ່ມີ ໒ ເຫດຸ ຄື ມີໂລພະເຫດຸ ໂມຫະເຫດຸເປັນເຫດຸຮ່ວມພ້ອມກັນ

**ອິສສາເຈຕະສິກ ມັຈສະຣິຍເຈຕະສິກ ກຸກກຸຈຈະເຈຕະສິກ** ຣວມ ໓ ດວງນີ້ ແຕ່ລະດວງທີ່ເກີດຈະຕ້ອງເກີດຮ່ວມກັບໂທສະ ແລະໂມຫະດ້ວຍພ້ອມກັນ ດັ່ງນັ້ນເຈຕະສິກທັງ ໓ ດວງນີ້ ແຕ່ລະດວງມີ ໒ ເຫດຸ ຄື ໂທສະເຫດຸ ໂມຫະເຫດຸ ເປັນເຫດຸ ຮ່ວມພ້ອມກັນ

**ອະໂລພະເຈຕະສິກ ອະໂທສະເຈຕະສິກ ປັນຍາເຈຕະສິກ** ທີ່ປະກອບພ້ອມກັນໃນຈິຕດວງໃດ ເຈຕະສິກ ໓ ດວງນີ້ຕ່າງກໍເປັນເຫດຸ ຊຶ່ງ ກັນແລະກັນ ຄື

**ອະໂລພະເຈຕະສິກ** ກໍມີ ອະໂທສະເຫດຸ ແລະ ອະໂມຫະເຫດຸ ຣວມມີ ໒ ເຫດຸ

**ອະໂທສະເຈຕະສິກ** ກໍມີ ອະໂລພະເຫດຸ ແລະ ອະໂມຫະເຫດຸ ຣວມມີ ໒ ເຫດຸ

**ປັນຍາເຈຕະສິກ** ກໍມີ ອະໂລພະເຫດຸ ແລະ ອະໂທສະເຫດຸ ຣວມມີ ໒ ເຫດຸ

ໃນຂໍ້ ໓ **ອະຫິຣິກະເຈຕະສິກ ອະໂນຕັປປະເຈຕະສິກ ອຸທັຈຈະເຈຕະສິກ** ຣວມເຈຕະສິກທັງ ໓ ດວງນີ້ຢູ່ໃນ

ປະເພດ**ໂມຈະຕຸກະເຈຕະສິກ** ຊຶ່ງປະກອບກັບອະກຸສົລຈິຕໄດ້ທຸກ ໆ ດວງທັງ ໑໒ ດວງ ອະກຸສົລຈິຕທັງຫມົດນັ້ນມີ ໓ ເຫດຸ ຄື **ໂລພະເຫດຸ ໂທສະເຫດຸ ໂມຫະເຫດຸ** ດັ່ງນັ້ນເຈຕະສິກ ທັງ ໓ ດວງທີ່ກ່າວນີ້ຈຶ່ງສາມາຖເກີດກັບເຫດຸທັງ ໓ ນັ້ນໄດ້ ຈຶ່ງໄດ້ຊື່ວ່າເປັນ**ເຈຕະສິກທີ່ມີ ໓ ເຫດຸ**

**ຖີນເຈຕະສິກ ມິທະເຈຕະສິກ ໒ ດວງ**ນີ້ ປະກອບກັບໂລພະມູລຈິຕກໍໄດ້ ປະກອບກັບໂທສະມູລຈິຕກໍໄດ້ ໂລພະມູລຈິຕ ມີໂລພະເຫດຸກັບ ໂມຫະເຫດຸ ໂທສະມູລຈິຕມີໂທສະເຫດຸກັບໂມຫະເຫດຸ ຣວມຈິຕ ໒ ປະເພດນີ້ມີ ໓ ເຫດຸ ຄື ໂລພະເຫດຸ ໂທສະເຫດຸ ໂມຫະເຫດຸ ດັ່ງນັ້ນ ຖີນະ ມິທະ ຊຶ່ງປະກອບກັບຈິຕ ໒ ປະເພດນີ້ໄດ້ ຈຶ່ງໄດ້ຊື່ວ່າ ເປັນເຈຕະສິກທີ່ມີ ໓ ເຫດຸ ຄື ໂລພະເຫດຸ ໂທສະເຫດຸ ໂມຫະເຫດຸ

**ໂສພະນະເຈຕະສິກ ໒໒** (ເວັ້ນອະໂລພະເຈຕະສິກ ອະໂທສະເຈຕະສິກ ປັນຍາເຈຕະສິກ ຊຶ່ງເປັນຕົ້ນເຫດຸ ແລະໄດ້ກ່າວໃນຂໍ້ ໒ ແລ້ວ) ເປັນເຈຕະສິກທີ່ສາມາຖເກີດພ້ອມກັບອະໂລພະເຈຕະສິກ ອະໂທສະເຈຕະສິກ ປັນຍາເຈຕະສິກໄດ້ ຈຶ່ງກ່າວວ່າ ໂສພະນະເຈຕະສິກ ໒໒ ດວງນີ້ມີ ໓ ເຫດຸ

ໃນຂໍ້ ໔ **ປີຕິເຈຕະສິກ ດວງດຽວ** ເປັນເຈຕະສິກທີ່ມີ ໕ ເຫດຸ ຄື ເມື່ອເກີດພ້ອມກັບໂລພະໂສມນັສກໍມີ ໂລພະເຫດຸ ໂມຫະເຫດຸ ເມື່ອເກີດກັບໂສມນັສຍານະສັມປະຍຸຕຕະ ກໍມີ ອະໂລພະເຫດຸ ອະໂທສະເຫດຸ ອະໂມຫະເຫດຸ ຈຶ່ງຣວມເປັນ ໕ ເຫດຸ ເວັ້ນໂທສະເຫດຸຢ່າງດຽວ ເພາະໂທສະມູລຈິຕ ນັ້ນບໍ່ມີປີຕິ ມີແຕ່ໂທມນັສ

ໃນຂໍ້ ໕ **ອັນຍະສະມານາເຈຕະສິກ ໑໒** (ເວັ້ນປີຕິເຈຕະສິກ) ເປັນເຈຕະສິກທີ່ມີເຫດຸທັງ ໖ ຄົບບໍລິບູນ ເພາະ ອັນຍະສະມານາເຈຕະສິກ ໑໒ ດວງນີ້ ເກີດພ້ອມກັບເຫດຸໃດ ໆ ໄດ້ທັງ ໖ ເຫດຸ

ທີ່ກ່າວມາແລ້ວນີ້ເປັນການສະແດງຕາມນັຍທີ່ ນັບແລ້ວບໍ່ນັບອີກ ທີ່ຊື່ **ອຄຫິຕັຄຄຫຕນັຍ** ແລະຄົງຈະເຫັນແລ້ວວ່າ **ເຈຕະສິກ** ດວງໃດທີ່ໄດ້ຍົກເປັນຫົວຂໍ້ຂຶ້ນກ່າວອ້າງແລ້ວ ເຊັ່ນ ໂລກະ ເຈຕະສິກ ໂທສະເຈຕະສິກ ວິຈິກິຈຈາເຈຕະສິກ ຫລື ເຈຕະສິກດວງອື່ນ ໆ ກໍດີ ເມື່ອໄດ້ຍົກເປັນຫົວຂໍ້ຂຶ້ນກ່າວອ້າງໃນຂໍ້ໃດທີ່ໃດແລ້ວ ກໍບໍ່ໄດ້ຍົກມາກ່າວອ້າງ ຫລື ຍົກມາສະແດງ ຊ້ຳ ໃນຂໍ້ອື່ນ ໆ ອີກເລີຍ ດັ່ງນັ້ນ ຈຶ່ງໄດ້ຊື່ວ່າ ນັບແລ້ວບໍ່ນັບອີກ

## ຄຫິຕັຄຄຫຕນັຍ

໑. **ອເຫຕຸກເຈຕະສິກ** ຄື ເຈຕະສິກທີ່ບໍ່ມີເຫດຸ ມີ ໑໓ ດວງ ໄດ້ແກ່

ກ. **ອັນຍະສະມານາເຈຕະສິກ ໑໒** (ເວັ້ນສັນທະເຈຕະສິກ) ທີ່ປະກອບກັບອເຫຕຸກະຈິດ ໑໘

ຂ. **ໂມຫະເຈຕະສິກ ໑** ສະເພາະທີ່ປະກອບກັບໂມຫະມູລະຈິດ ໒

໒. **ເອກະເຫຕຸກເຈຕະສິກ** ຄື ເຈຕະສິກທີ່ມີເຫດຸດຽວ ມີ ໒໐ ດວງ ໄດ້ແກ່

ກ. **ເຈຕະສິກ ໑໕ ດວງ** ທີ່ປະກອບກັບໂມຫະມູລະຈິດ ໒ (ເວັ້ນໂມຫະເຈຕະສິກ)

ຂ. **ເຈຕະສິກ ໓ ດວງ** ຄື ໂລກະເຈຕະສິກ ໂທສະເຈຕະສິກ ໂມຫະເຈຕະສິກ (ສຳຫລັບໂມຫະ ເຈຕະສິກນີ້ ຫມາຍເຖິງ ປະກອບກັບໂລກະມູລະຈິດໂດຍສະເພາະ ແລະທີ່ປະກອບ ກັບ ໂທສະມູລະຈິດໂດຍສະເພາະ)

ຄ. **ເຈຕະສິກ ໒ ດວງ** ຄື ອໂລກະເຈຕະສິກ ອໂທສະເຈຕະສິກ ທີ່ປະກອບກັບຍານະວິປປະຢຸຕຕະຈິດ ໑໒

໓. **ທວິເຫຕຸກເຈຕະສິກ** ຄື ເຈຕະສິກທີ່ມີ ໒ ເຫດຸ ມີ ໔໘ ດວງ ໄດ້ແກ່

ກ. **ເຈຕະສິກ ໔໕ ດວງ** (ເວັ້ນໂລກະ ໂທສະ ໂມຫະ ອໂລກະ ອໂທສະ ທີ່ເປັນຕົວເຫດຸ) ທີ່ ປະກອບກັບທວິເຫຕຸກະຈິດ ໒໒

ຂ. **ເຈຕະສິກ ໓ ດວງ** ຄື ອໂລກະເຈຕະສິກ ອໂທສະເຈຕະສິກ ປັນຍາເຈຕະສິກ ທີ່ ປະກອບກັບຕິເຫຕຸກະຈິດ ໔໗ ຫລື ໗໙

໔. **ຕິເຫຕຸກເຈຕະສິກ** ຄື ເຈຕະສິກທີ່ມີ ໓ ເຫດຸ ມີ ໓໕ ດວງ ໄດ້ແກ່

ກ. **ອັນຍະສະມານາເຈຕະສິກ ໑໓ ດວງ**

ຂ. **ໂສພະນະເຈຕະສິກ ໒໒ ດວງ** (ເວັ້ນອໂລກະ ອໂທສະ ປັນຍາ ອັນເປັນຕົວເຫດຸ) ທີ່ປະກອບກັບຕິເຫຕຸກະຈິດ ໔໗ ຫລື ໗໙

## ອະທິບາຍ

໑. **ອະເຫຕຸກະຈິດ ໑໘ ດວງ** ມີເຈຕະສິກປະກອບໄດ້ຢ່າງຫລາຍທີ່ສຸດ ໑໒ ດວງ ຄື ອັນຍະສະມານາເຈຕະສິກ ໑໒ (ເວັ້ນສັນທະເຈຕະສິກ) ອັນໄດ້ແກ່ ຜັສສະ ເວທະນາ ສັນຍາ ເຈຕະນາ ເອກັຄຄະຕາ ຊີວິຕິນທະຣີຍ ມະນະສິການ ວິຕົກ ວິຈານ ອະທິໂມກຂະ ວິຣິຍະ ແລະປີຕິ ໃນບັນດາເຈຕະສິກ ທັ້ງ ໑໒ ດວງນີ້ ບໍ່ມີ ໂລກະເຈຕະສິກ ໂທສະເຈຕະສິກ ໂມຫະເຈຕະສິກ ອະໂລກະເຈຕະສິກ ອະໂທສະເຈຕະສິກ ແລະປັນຍາເຈຕະສິກ ອັນເປັນຕົວເຫຕຸທັ້ງ ໖ ປະກອບຮ່ວມຢູ່ດ້ວຍເລີຍແມ້ແຕ່ເຫຕຸດຽວ ດັ່ງນັ້ນເຈຕະສິກທັ້ງ ໑໒ ດວງນີ້ ຈຶ່ງໄດ້ຊື່ວ່າເຈຕະສິກທີ່ບໍ່ມີເຫຕຸຕຣົງຕາມຂໍ້ ໑ ກ.

໒. **ໂມຫະມູລະຈິດ ໒ ດວງ** ມີເຈຕະສິກປະກອບໄດ້ ຄື ອັນຍະສະມານາເຈຕະສິກ ໑໑ (ເວັ້ນປີຕິເຈຕະສິກ ສັນທະເຈຕະສິກ) ໂມຈະຕຸກະເຈຕະສິກ ໔ ວິຈິກິຈສາເຈຕະສິກ ໑ ຮວມເປັນ ໑໖ ດວງ ໄດ້ແກ່ ຜັສສະ ເວທະນາ ສັນຍາ ເຈຕະນາ ເອກັຄຄະຕາ ຊີວິຕິນທະຣີຍ ມະນະສິການ ວິຕົກ ວິຈານ ອະທິໂມກຂະ ວິຣິຍະ ໂມຫະ ອະຫິຣິກະ ອະໂນຕັປປະ ອຸທັຈຈະ ແລະ ວິຈິກິຈສາ ໃນບັນດາ ເຈຕະສິກທັ້ງ ໑໖ ດວງນີ້ ມີໂມຫະເຈຕະສິກ ອັນເປັນຕົວເຫຕຸຢູ່ພຽງ ໑ ເຫຕຸເທົ່ານັ້ນ ເຈຕະສິກ ອີກ ໑໕ ດວງ ນັ້ນ ບໍ່ມີເຈຕະສິກອັນເປັນຕົວເຫຕຸອີກເລີຍ ດັ່ງນັ້ນຈຶ່ງໄດ້ຊື່ວ່າ ໂມຫະເຈຕະສິກ ທີ່ໃນໂມຫະມູລະຈິດ ໒ ດວງນີ້ ເປັນເຈຕະສິກ ທີ່ບໍ່ມີເຫຕຸ ຕຣົງຕາມຂໍ້ ໑ ຂ. ເພາະໂມຫະເຈຕະສິກ ໃນທີ່ນີ້ແມ້ຕົວເອງຈະເປັນຕົວເຫຕຸກໍຈິງ ແຕ່ບໍ່ມີເຫຕຸອື່ນມາ ປະກອບຮ່ວມອີກດ້ວຍເລີຍ

໓. **ໂມຫະມູລະຈິດ ໒ ດວງ** ມີ ເຈຕະສິກປະກອບໄດ້ ໑໖ ດວງ ດັ່ງທີ່ໄດ້ກ່າວແລ້ວໃນ ຂໍ້ ໒ ຂ້າງເທິງນີ້ນັ້ນ ໃນຈຳນວນເຈຕະສິກ ໑໖ ດວງ ມີໂມຫະເຈຕະສິກອັນເປັນຕົວໂມຫະເຫຕຸ ໑ ແລະເຈຕະສິກອື່ນ ໆ ອີກ ໑໕ ດວງຈະເພາະ ເຈຕະສິກ ໑໕ ດວງນີ້ ເກີດຮ່ວມກັບໂມຫະເຈຕະສິກອັນ ເປັນໂມຫະເຫຕຸ ດັ່ງນັ້ນຈຶ່ງກ່າວໄດ້ວ່າເຈຕະສິກ ໑໕ ດວງ ນີ້ເປັນເຈຕະສິກທີ່ມີເຫຕຸ ຄື ໂມຫະເຫຕຸ ເຫຕຸດຽວຕຣົງຕາມຂໍ້ ໒ ກ. ເພາະເຈຕະສິກ ໑໕ ດວງນີ້ມີໂມຫະເຫຕຸເກີດມາຮ່ວມ ປະກອບດ້ວຍ

໔. **ໂລກະມູລະຈິດ ໘ ດວງ** ມີເຈຕະສິກທີ່ປະກອບໄດ້ ຄື ອັນຍະສະມານາເຈຕະສິກ ໑໓ ໂມຈະຕຸກະເຈຕະສິກ ໔ ໂລຕິກະເຈຕະສິກ ໓ ແລະຖີທຸກະເຈຕະສິກ ໒ ຮວມ ໒໒ ດວງ ອັນໄດ້ແກ່ ຜັສສະ ເວທະນາ ສັນຍາ ເຈຕະນາ ເອກັຄຄະຕາ ຊີວິຕິນທະຣີຍ ມະນະສິການ ວິຕົກ ວິຈານ ອະທິໂມກຂະ ວິຣິຍະ ປີຕິ ສັນທະ **ໂມຫະ** ອະຫິຣິກະ ອະໂນຕັປປະ ອຸທັຈຈະ **ໂລກະ** ທິຍຖິ ມານະ ຖີນະ ແລະມິທະະ ໃນບັນດາເຈຕະສິກທັ້ງ ໒໒ ດວງນີ້ ມີໂລກະເຈຕະສິກ ອັນເປັນໂລກະເຫຕຸ ໑ ມີໂມຫະ ເຈຕະສິກອັນເປັນໂມຫະເຫຕຸ ໑ ຮ່ວມຢູ່ດ້ວຍກັນ ດັ່ງນັ້ນຈຶ່ງກ່າວໄດ້ວ່າ ໂລກະເຈຕະສິກມີເຫຕຸ ໑ ຄືມີໂມຫະເຫຕຸເກີດຮ່ວມດ້ວຍ ແລະໂດຍທຳນອງດຽວກັນ ໂມຫະເຈຕະສິກໃນທີ່ນີ້ກໍມີເຫຕຸ ໑ ຄືມີໂລກະເຫຕຸເກີດຮ່ວມດ້ວຍ

ໂທສມູລຈິດ ໒ ດວງ ມີເຈຕສິກທີ່ປະກອບໄດ້ ຄື ອັນຍະສະມານາເຈຕສິກ ໑໒ (ເວັ້ນປີຕິເຈຕສິກ) ໂມຈຕຸກເຈຕສິກ ໔ ໂທຈຕຸກເຈຕສິກ ໔ ແລະຖີທຸກເຈຕສິກ ໒ ຣວມ ໒໒ ດວງ ອັນໄດ້ແກ່ ຜັສສະ ເວທນາ ສັນຍາ ເຈຕນາ ເອກັຄຄຕາ ຊີວິຕິນທຣິຍ ມນສິການ ວິຕົກ ວິຈາຣ ອທິໂມກຂ ວິຣິຍະ ຈັນທະ **ໂມຫະ** ອຫິຣິກະ ອໂນຕັປປະ ອຸທັຈຈະ **ໂທສະ** ອິສສາ ມັຈຊຣິຍະ ກຸກກຸຈຈະ ຖີນະ ແລະ ມິທລະ ໃນ ບັຣດາເຈຕສິກທັ້ງ ໒໒ ດວງນີ້ ມີໂທສເຈຕສິກ ອັນເປັນ ໂທສເຫຕຸ ໑ ມີໂມຫາເຈຕສິກອັນເປັນໂມຫາເຫຕຸ ໑ ເກີດຮ່ວມຢູ່ດ້ວຍກັນ ດັ່ງນັ້ນຈຶ່ງ ກ່າວໄດ້ວ່າ ໂທສເຈຕສິກ ມີເຫຕຸ ໑ ຄືມີໂມຫາເຫຕຸເກີດຮ່ວມດ້ວຍ ແລະໂດຍທຳນອງດຽວກັນ ໂມຫາເຈຕສິກ ໃນທີ່ນີ້ (ຄືໃນໂທສມູລຈິຕນີ້) ກໍມີເຫຕຸ ໑ ຄືມີໂທສເຫຕຸເກີດຮ່ວມດ້ວຍ

ຣວມຄວາມໃນຂໍ້ ໔ ນີ້ຄົງໄດ້ຄວາມວ່າ ໂລກເຈຕສິກກໍດີ ໂທສເຈຕສິກກໍດີ ໂມຫາເຈຕສິກ ທີ່ໃນໂລກມູລຈິຕກໍດີ ແລະໂມຫາເຈຕສິກ ທີ່ໃນໂທສມູລຈິຕກໍດີ ຕ່າງກໍມີເຫຕຸດຽວເທົ່ານັ້ນ ຕຣົງຕາມຂໍ້ ໔ ຂ.

໕. **ກາມາວຈຣໂສກຕຈິຕຍາຕວິປປຢຸຕຕ ໑໒ ມີເຈຕສິກ ປຣະກອບ ໓໗ ດວງ** ຄື **ອັນຍະສະມານາເຈຕສິກ ໑໓ ໂສກຕເຈຕສິກ ໒໔** (ເວັ້ນປັນຍາເຈຕສິກ) ໃນຈຳນວນເຈຕສິກ ໓໗ ດວງນີ້ ມີ ອໂລກເຈຕສິກ ໑ ອໂທສເຈຕສິກ ໑ ແລະເຈຕສິກອື່ນ ໆ ອີກ ໓໕ ດວງ ເພາະວ່າ ອໂລກເຈຕສິກເກີດຮ່ວມກັບອໂທສເຈຕສິກຊຶ່ງຕ່າງກໍເປັນຕົວເຫຕຸດ້ວຍກັນທັ້ງຄູ່ ແລະ ຕ່າງກໍເປັນເຫຕຸໃຫ້ແກ່ກັນແລະກັນ ດັ່ງນັ້ນໃນ ທີ່ນີ້ ອໂລກເຈຕສິກ ກໍມີເຫຕຸ ໑ ຄື ອໂທສເຫຕຸ ແລະ ອໂທສເຈຕສິກ ກໍມີເຫຕຸ ໑ ຄື ອໂລກເຫຕຸ ຕຣົງຕາມຂໍ້ ໔ ຄ.

໖. **ທວິເຫຕຸກຈິຕ ໒໒** ນັ້ນໄດ້ແກ່ **ໂລກມູລຈິຕ ໘ ໂທສມູລຈິຕ ໒ ກາມາວຈຣໂສກຕ ຍາຕວິປປຢຸຕຕຈິຕ ໑໒**

**ໂລກມູລຈິຕ ໘ ມີເຈຕສິກປຣະກອບ ໒໒ ດວງ** ຄື **ໂລກເຈຕສິກ ໑ ໂມຫາເຈຕສິກ ໑** ແລະ**ເຈຕສິກອື່ນ ໆ ອີກ ໒໐ ດວງ** ເຈຕສິກອື່ນ ໆ (ເວັ້ນໂລກະ ໂມຫະ) ໒໐ ດວງນີ້ເກີດຮ່ວມກັບໂລກເຈຕສິກ ໂມຫາເຈຕສິກ ດັ່ງນັ້ນຈຶ່ງໄດ້ຊື່ວ່າ ເຈຕສິກ ໒໐ ດວງນີ້ ມີ ໒ ເຫຕຸ ຄື ໂລກເຫຕຸກັບໂມຫາເຫຕຸ

**ໂທສມູລຈິຕ ໒** ມີເຈຕສິກປຣະກອບ ໒໒ ດວງ ຄື **ໂທສເຈຕສິກ ໑ ໂມຫາເຈຕສິກ ໑** ແລະ**ເຈຕສິກອື່ນ ໆ ອີກ ໒໐ ດວງ** ເຈຕສິກອື່ນ ໆ (ເວັ້ນໂທສະ ໂມຫະ) ໒໐ ດວງ ນີ້ເກີດຮ່ວມກັບໂທສເຈຕສິກ ໂມຫາເຈຕສິກ ດັ່ງນັ້ນຈຶ່ງໄດ້ຊື່ວ່າ ເຈຕສິກ ໒໐ ດວງນີ້ມີ ໒ ເຫຕຸ ຄື ໂທສເຫຕຸກັບໂມຫາເຫຕຸ

**ກາມາວຈຣໂສກຕຍາຕວິປປຢຸຕຕຈິຕ ໑໒ ມີເຈຕສິກປຣະກອບ ໓໗ ດວງ** ຄື **ອໂລກເຈຕສິກ ໑ ອໂທສເຈຕສິກ ໑** ແລະ**ເຈຕສິກອື່ນ ໆ ອີກ ໓໕ ດວງ** ເຈຕສິກອື່ນ ໆ (ທີ່ເວັ້ນ ອໂລກະ ອໂທສະ ແລ້ວ) ໓໕ ດວງນີ້ ເກີດຮ່ວມກັບ ອໂລກເຈຕສິກ ອໂທສເຈຕສິກ ດັ່ງນັ້ນຈຶ່ງໄດ້ຊື່ວ່າ ເຈຕສິກ ໓໕ ດວງນີ້ມີ ໒ ເຫຕຸ ຄື ອໂລກເຫຕຸ ແລະອໂທສເຫຕຸ

ເມື່ອຮວມເຈຕສິກທີ່ປະກອບກັບທະວິເຫຕຸກະຈິດ ໔໔ ດວງ ທີ່ກ່າວໃນຂໍ້ ຝ ນີ້ເຂົ້າດ້ວຍກັນທັງຫມົດແລ້ວຫັກ ໂລພະ ໂທສະ ໂມຫະ ອະໂລພະ ອະໂທສະ ເຈຕສິກທີ່ເປັນຕົວເຫຕຸອອກ ແລະຫັກເຈຕສິກທີ່ຊໍ້າກັນອອກເສັຽອີກດ້ວຍແລ້ວ ຈະໄດ້ ເຈຕສິກ ໔໕ ດວງ ໃນເຈຕສິກ ໔໕ ດວງນີ້ແຫລະທີ່ໄດ້ຊື່ວ່າ ມີ ໑ ເຫຕຸ ຄື

ເຈຕສິກທີ່ບໍ່ແມ່ນເຫຕຸ ຊຶ່ງປະກອບກັບໂລພະມູລຈິດນັ້ນ ມີ ໑ ເຫຕຸ ຄື ໂລພະເຫຕຸກັບໂມຫະເຫຕຸ

ເຈຕສິກທີ່ບໍ່ແມ່ນເຫຕຸ ຊຶ່ງປະກອບກັບໂທສະມູລຈິດນັ້ນ ມີ ໑ ເຫຕຸ ຄື ໂທສະເຫຕຸກັບໂມຫະເຫຕຸ

ເຈຕສິກທີ່ບໍ່ແມ່ນເຫຕຸ ຊຶ່ງປະກອບກັບກາມຈິດວິປປະຍຸດຕນັ້ນ ມີ ໑ ເຫຕຸ ຄື ອະໂລພະເຫຕຸກັບອະໂທສະເຫຕຸ ເປັນອັນວ່າຕຣົງກັບຂໍ້ ໖ ກ.

ກ. **ຈິຕທີ່ເປັນຍານະສັມປະຍຸດຕະ ໔໗ ຫລື ໗໙ ດວງ** ຈະຕ້ອງມີ ອະໂລພະເຈຕສິກ ອະໂທສະເຈຕສິກ ປັນຍາເຈຕສິກ ປະກອບ ເຈຕສິກ ໓ ດວງນີ້ ກໍຄືເຫຕຸທັງ ໓ ນັ້ນເອງ ເຫຕຸທັງ ໓ ທີ່ເກີດຮ່ວມກັນ ເກີດພ້ອມກັນນີ້ ຕ່າງກໍເປັນເຫຕຸ ໃຫ້ແກ່ກັນແລະກັນ ຄື

ອະໂລພະເຈຕສິກ ກໍມີ ອະໂທສະເຫຕຸ ກັບ ອະໂມຫະເຫຕຸ ເປັນເຫຕຸຮວມ ໑ ເຫຕຸ

ອະໂທສະເຈຕສິກ ກໍມີ ອະໂລພະເຫຕຸ ກັບ ອະໂມຫະເຫຕຸ ເປັນເຫຕຸຮວມ ໑ ເຫຕຸ

ປັນຍາເຈຕສິກ ກໍມີ ອະໂລພະເຫຕຸ ກັບ ອະໂທສະເຫຕຸ ເປັນເຫຕຸຮວມ ໑ ເຫຕຸ

ດັ່ງນັ້ນຈຶ່ງກ່າວໄດ້ວ່າ ອະໂລພະເຈຕສິກ ອະໂທສະເຈຕສິກ ປັນຍາເຈຕສິກ ຮວມເຈຕສິກ ໓ ດວງນີ້ ແຕ່ລະດວງ ກໍເປັນເຈຕສິກທີ່ມີ ໑ ເຫຕຸ ຕຣົງຕາມຂໍ້ ໖ ຂ.

ກຼ. **ຈິຕທີ່ເປັນໄຕຣເຫຕຸ ຫລື ຕິເຫຕຸກະຈິຕ ໔໗ ຫລື ໗໙ ດວງ** ມີເຈຕສິກປະກອບ ໓໗ ດວງ ຄື **ອະໂລພະເຈຕສິກ ໑ ອະໂທສະເຈຕສິກ ໑ ປັນຍາເຈຕສິກ ໑** ແລະ**ເຈຕສິກອື່ນ ໆ ອີກ ໓໕ ດວງ** ເພາະເຈຕສິກ ໓໕ ດວງ ນີ້ເກີດຮ່ວມ ພ້ອມກັບອະໂລພະເຈຕສິກ ອະໂທສະເຈຕສິກ ປັນຍາເຈຕສິກ ອັນເປັນຕົວເຫຕຸທັງ ໓ ນັ້ນເອງ ຈຶ່ງໄດ້ຊື່ວ່າ ເຈຕສິກ ໓໕ (ເວັ້ນ ອະໂລພະ ອະໂທສະ ປັນຍາ) ປະກອບກັບຕິເຫຕຸກະຈິຕນັ້ນເປັນເຈຕສິກທີ່ມີ ໓ ເຫຕຸ ຕຣົງຕາມຂໍ້ ໔

ທີ່ກ່າວມາຕອນນີ້ ເປັນການສະແດງຕາມນັຍ ນັບແລ້ວນັບອີກ ທີ່ຊື່ **ຄຫິຕັຄຄຫະນັຍ** ຊຶ່ງຄົງຈະເຫັນແລ້ວວ່າ ເຈຕສິກ ດວງໃດທີ່ໄດ້ຍົກເປັນຫົວຂໍ້ຂຶ້ນກ່າວແລ້ວ ອ້າງແລ້ວເຊັ່ນ ອັນຍະສະມານາເຈຕສິກ ໂມຫະເຈຕສິກ ເປັນຕົ້ນ ໃນຂໍ້ຕໍ່ມາກໍຍັງຍົກ ມາສະແດງ ຍົກມາກ່າວອ້າງຊໍ້າອີກ ດັ່ງນີ້ ຈຶ່ງໄດ້ຊື່ວ່າ ນັບແລ້ວນັບອີກ

# ຫມວດທີ່ ໓ ກິຈຈສັງຄຫະ

**ກິຈຈສັງຄຫະ** ຄື ການຣວບຣວມສະແດງເຣື່ອງກິຈ ຫມາຍຄວາມວ່າ ຣວບຣວມສະແດງເຣື່ອງ ກິຈການງານ ຫລື ຫນ້າທີ່ຂອງຈິຕ ເຈຕສິກ ເພື່ອໃຫ້ຮູ້ວ່າຈິຕດວງໃດຕລອດຈົນເຈຕສິກທີ່ ປຣະກອບກັບຈິຕນັ້ນ ມີກິຈການງານ ຫລື ມີຫນ້າທີ່ເຮັດຫຍັງກັນ

ນອກຈາກກິຈແລ້ວ ທ່ານສະແດງຖານໃຫ້ຮູ້ໄວ້ດ້ວຍ **ຖານ** ແປລວ່າທີ່ຕັ້ງ **ຖານຂອງກິຈ** ກໍຄືທີ່ຕັ້ງ ທີ່ທຳງານ ເປັນສຖານທີ່ທີ່ຈິຕ ແລະເຈຕສິກທຳກິຈການງານ ມີຄາຖາສັງຄຫະ ເປັນຄາຖາທີ່ ໗ ສະແດງວ່າ

ໆ. ປຎິສນ຺ລທໂປ ນາມ ກິຈ຺ຈເກເທນ ຈຸທ຺ທສ

ທສລາ ຖານເກເທນ ຈິຕ຺ຕຸປ຺ປາທາ ປກາສິຕາ ໆ

ແປລຄວາມວ່າ ບັຣດາຈິຕທີ່ເກີດຂຶ້ນ ມີກິຈການງານທີ່ຕ້ອງທຳ ໑໔ ປຣະເກທ ເຊັ່ນ ປຎິສົນລິກິຈ ເປັນຕົ້ນ ຖານ ຫລື ສຖານທີ່ ທຳງານຂອງຈິຕ ມີພຽງ ໑໐ ເທົ່ານັ້ນ

## ອະທິບາຍ

ຈິຕທັງຫມົດ ຄື ທັ້ງ ໘໙ ຫລື ໑໒໑ ດວງ ມີກິຈການງານຫລືມີຫນ້າທີ່ຕ້ອງທຳພຽງ ໑໔ ຢ່າງ ຫລື ໑໔ ກິຈ ເທົ່ານັ້ນ ແລະໃນ ໑໔ ກິຈນີ້ ມີສຖານທີ່ສຳຫລັບທຳກິຈການງານ ນັ້ນ ໑໐ ແຫ່ງ ຫລື ໑໐ ຖານ ຄື

| | |
|---|---|
| ໑. ປຎິສົນລິກິຈ | ມີຖານ ຄືສຖານທີ່ທຳການງານເອີ້ນວ່າ **ປຎິສົນລິຖານ** |
| ໒. ກວັງຄກິຈ | ມີຖານ ຄືສຖານທີ່ທຳການງານເອີ້ນວ່າ **ກວັງຄຖານ** |
| ໓. ອາວັຊຊນກິຈ | ມີຖານ ຄືສຖານທີ່ທຳການງານເອີ້ນວ່າ **ອາວັຊຊນຖານ** |
| ໔. ທັສສນກິຈ<br>໕. ສວນກິຈ<br>໖. ຆາຍນກິຈ<br>໗. ສາຍນກິຈ<br>໘. ຜຸສນກິຈ | ມີຖານ ຄືສຖານທີ່ທຳການງານເອີ້ນວ່າ **ປັລຈວິລຍາຕຖານ** |
| ໙. ສັມປຎິຈລັນນກິຈ | ມີຖານ ຄືສຖານທີ່ທຳການງານເອີ້ນວ່າ **ສັມປຎິຈລັນນຖານ** |
| ໑໐. ສັນຕີຣຕກິຈ | ມີຖານ ຄືສຖານທີ່ທຳການງານເອີ້ນວ່າ **ສັນຕີຣຕຖານ** |
| ໑໑. ໂວຜກັພພນກິຈ | ມີຖານ ຄືສຖານທີ່ທຳການງານເອີ້ນວ່າ **ໂວຜກັພພນຖານ** |

໑໔. ຊວນກິຈ ມີຖານ ຄືສະຖານທີ່ທຳການງານເອີ້ນວ່າ **ຊວນຖານ**

໑໕. ຕະທາລັມພນກິຈ ມີຖານ ຄືສະຖານທີ່ທຳການງານເອີ້ນວ່າ **ຕະທາລັມພນຖານ**

໑໔. ຈຸຕິກິຈ ມີຖານ ຄືສະຖານທີ່ທຳການງານເອີ້ນວ່າ **ຈຸຕິຖານ**

## ໜ້າທີ່ຂອງກິຈ

໑. **ປະຕິສົນທິກິຈ** ທຳໜ້າທີ່ສືບຕໍ່ກົພສືບຕໍ່ຊາຕິ ຄື ຄວາມເກີດຂຶ້ນໃນກົພໃໝ່ ໝາຍສະເພາະຂະນະແຣກທີ່ເກີດໃໝ່ຂະນະດຽວເທົ່ານັ້ນ ຈັ່ງນັ້ນໃນກົພນຶ່ງຊາຕິນຶ່ງ ຈິຕທີ່ທຳກິຈປະຕິສົນທິຈຶ່ງມີພຽງເທື່ອດຽວ ຂະນະດຽວເທົ່ານັ້ນ

໒. **ກວັງຄະກິຈ** ທຳໜ້າທີ່ເປັນອົງຄ໌ຂອງກົພ ເຮັດໃຫ້ຕັ້ງຢູ່ໃນກົພນັ້ນໆ ເທົ່າທີ່ອາຍຸສັງຂາຈະຢູ່ໄດ້ ຈິຕທຳກວັງຄະກິຈນີ້ເຮັດຢູ່ສະເມີ ນ້ອຍແດ່ ຫລາຍແດ່ ນັບປະມານບໍ່ໄດ້

໓. **ອາວັຊຊນະກິຈ** ທຳໜ້າທີ່ພິຈາຣະນາອາຣົມຕ໌ທີ່ມາເຖິງຕົນ ທັ້ງທາງປັນຈະທວາຣ ແລະ ມະໂນທວາຣ ໃນວິຖີນຶ່ງ ໆ ເກີດຂຶ້ນພຽງ ຂະນະດຽວ ເປັນຈິຕນຳວິຖີ ເພາະເປັນຈິຕດວງ ແຣກທີ່ຂຶ້ນວິຖີໃໝ່ໃນທຸກ ໆ ວິຖີ

໔. **ທັສສນະກິຈ** ທຳໜ້າທີ່ ເຫັນ ໃນວິຖີນຶ່ງ ໆ ເກີດຂຶ້ນຂະນະດຽວ

໕. **ສວນະກິຈ** ທຳໜ້າທີ່ ໄດ້ຍິນ ໃນວິຖີນຶ່ງ ໆ ເກີດຂຶ້ນຂະນະດຽວ

໖. **ຄາຍນະກິຈ** ທຳໜ້າທີ່ ໄດ້ກິ່ນ ໃນວິຖີນຶ່ງ ໆ ເກີດຂຶ້ນຂະນະດຽວ

໗. **ສາຍນະກິຈ** ທຳໜ້າທີ່ ຮູ້ຣົສ ໃນວິຖີນຶ່ງ ໆ ເກີດຂຶ້ນຂະນະດຽວ

໘. **ຜຸສນະກິຈ** ທຳໜ້າທີ່ ຮູ້ສິ່ງທີ່ມາກະທົບກາຍ ມີເຢັນ ຮ້ອນ ອ່ອນແຂ້ງ ເປັນຕົ້ນ ໃນວິຖີນຶ່ງ ໆ ເກີດຂຶ້ນຂະນະດຽວ

໙. **ສັມປະຕິຈັນນະກິຈ** ທຳໜ້າທີ່ຮັບອາຣົມຕ໌ຕໍ່ຈາກທະວິປັນຈະວິນຍານ ໃນວິຖີນຶ່ງ ໆ ເກີດຂຶ້ນຂະນະດຽວ

໑໐. **ສັນຕີຣະນະກິຈ** ທຳໜ້າທີ່ໄຕ່ສວນອາຣົມຕ໌ທີ່ສັມປະຕິຈັນນະກິຈສົ່ງມາໃຫ້ ໃນວິຖີນຶ່ງ ໆ ເກີດຂຶ້ນຂະນະດຽວ

໑໑. **ໂວຕຖັພພນະກິຈ** ທຳໜ້າທີ່ຕັດສິນອາຣົມຕ໌ ກຳໜົດໃຫ້ເປັນກຸສົລ ອກຸສົລ ຫລື ກິຣິຍາ ໃນວິຖີນຶ່ງ ໆ ຕາມປົກຕິກໍເກີດຂຶ້ນພຽງຂະນະດຽວ ແຕ່ຖ້າອາຣົມຕ໌ນັ້ນບໍ່ຊັດ ຕັດສິນບໍ່ລົງ ກໍອາຈເກີດ ໒ ຂະນະກໍມີ ຫລາຍທີ່ສຸດພຽງ ໓ ຂະນະ

໑໔. **ຊວນະກິຈ** ທຳໜ້າທີ່ເສພອາຣົມຕ໌ເປັນ ກຸສົລ ອກຸສົລ ຫລື ກິຣິຍາ ຕາມທີ່ໂວຕຖັພພນະກິຈໄດ້ຕັດສິນ ແລະກຳໜົດມາໃນວິຖີນຶ່ງ ໆ ຕາມປົກຕິກໍເກີດຊວນະ ໗ ຂະນະ ແຕ່ວ່າທີ່ເກີດນ້ອຍກວ່ານີ້ກໍມີ ແລະທີ່ເກີດຫລວງຫລາຍຈົນປະມານບໍ່ໄດ້ກໍມີຄືກັນ (ເຊັ່ນ ເວລາເຂົ້າຊານສະມາບັຕິ)

໑໕. **ຕະທາລັມພນະກິຈ** ທຳໜ້າທີ່ຮັບຮູ້ອາຣົມຕ໌ທີ່ເຫລືອຈາກຊວນະກິຈ ໃນວິຖີນຶ່ງ ໆ ເກີດ ຂຶ້ນ ໒ ຂະນະ

໑໔. **ຈຸຕິກິຈ** ທຳໜ້າທີ່ເຄື່ອນຈາກພົບເກົ່າ ເປັນຈິດສຸດທ້າຍໃນພົບນັ້ນຊາຕິນັ້ນ ໃນພົບນຶ່ງຊາຕິນຶ່ງ ຈິດທຳຈຸຕິກິຈນີ້ພຽງເທື່ອດຽວຂະນະດຽວເທົ່ານັ້ນ



# ຈິຕທ່ຳກິຈ

| | | | |
|---|---|---|---|
| ໑. ຈິຕທ່ຳ **ປຏິສົນທິກິຈ** | ມີ ໑໙ ດວງ ຄື | ອຸເປກຂາສັນຕີຣຈິຕ | ໒ |
| | | ມຫາວິປາກຈິຕ | ໘ |
| | | ມຫັຄຄຕວິປາກຈິຕ | ໙ |
| ໒. ຈິຕທ່ຳ **ພວັງຄກິຈ** | ມີ ໑໙ ດວງ ຄື | ເທົ່າກັນແລະຄືກັນກັບປຏິສົນທິກິຈ | |
| ໓. ຈິຕທ່ຳ **ອາວັຊຊນກິຈ** | ມີ ໒ ດວງ ຄື | ປັຌຈທວາຣາວັຊຊນຈິຕ | ໑ |
| | | ມໂນທວາຣາວັຊຊນຈິຕ | ໑ |
| ໔. ຈິຕທ່ຳ **ທັສສນກິຈ** | ມີ ໒ ດວງ ຄື | ຈັກຂຸວິຌຌາຕຈິຕ | ໒ |
| ໕. ຈິຕທ່ຳ **ສວນກິຈ** | ມີ ໒ ດວງ ຄື | ໂສຕວິຌຌາຕຈິຕ | ໒ |
| ໖. ຈິຕທ່ຳ **ຆາຍນກິຈ** | ມີ ໒ ດວງ ຄື | ຆານວິຌຌາຕຈິຕ | ໒ |
| ໗. ຈິຕທ່ຳ **ສາຍນກິຈ** | ມີ ໒ ດວງ ຄື | ຊິວຫາວິຌຌາຕຈິຕ | ໒ |
| ໘. ຈິຕທ່ຳ **ຜຸສນກິຈ** | ມີ ໒ ດວງ ຄື | ກາຍວິຌຌາຕຈິຕ | ໒ |
| ໙. ຈິຕທ່ຳ **ສັມປຏິຈຉັນນກິຈ** | ມີ ໒ ດວງ ຄື | ສັມປຏິຈຉັນນຈິຕ | ໒ |
| ໑໐. ຈິຕທ່ຳ **ສັນຕີຣຓກິຈ** | ມີ ໓ ດວງ ຄື | ອຸເປກຂາ ສັນຕີຣຈິຕ | ໒ |
| | | ໂສມນັສ ສັນຕີຣຈິຕ | ໑ |
| ໑໑. ຈິຕທ່ຳ **ໂວຏຖັພພນກິຈ** | ມີ ໑ ດວງ ຄື | ມໂນທວາຣາວັຊຊນຈິຕ | ໑ |

| | | | |
|---|---|---|---|
| ໑໒. ຈິຕທ່ຳ **ຊວນກິຈ** ມີ ໕໕ ດວງ ຄື | ອກຸສົລຈິຕ | ໑໒ | ກາມຊວນະ ໒໙ |
| | ຫສິຕຸປປາທຈິຕ | ໑ | |
| | ມຫາກຸສົລຈິຕ | ໘ | |
| | ມຫາກິຣິຍາຈິຕ | ໘ | |
| | ມຫັຄຄຕກຸສົລຈິຕ | ໙ | ອັປປນາຊວນະ ໒໖ |
| | ມຫັຄຄຕກິຣິຍາ | ໙ | |
| | ໂລກຸຕຕຈິຕ | ໘ | |

| | | | |
|---|---|---|---|
| ໑໓. **ຕທາລັມພນກິຈ** | ມີ ໑໑ ດວງ ຄື | ສັນຕີຣຈິຕ | ໓ |
| | | ມຫາວິປາກຈິຕ | ໘ |
| ໑໔. **ຈຸຕິກິຈ** | ມີ ໑໙ ດວງ ຄື | ເທົ່າກັນແລະຄືກັນກັບປຏິສົນທິກິຈ | |

ກຸ. ອຕຸກສຕຸກີ ຕຖາ ເທວ ຈ ນວາຍຸກ຺ ເທວ ຍຖາກ຺ກມໍ

ເອກ ທ຺ວິ ຕິ ຈຕຸ ປຌ຺ຈ ກິຈ຺ຈຝ຺ຖານານິ ນິທ຺ທິເສ ໆ

ແປລຄວາມວ່າ ຈິຕທຳກິຈ ໑ ມີຖານ ໑ ນັ້ນ ມີຢູ່ ຝກ ດວງ

ຈິຕທຳກິຈ ໒ ມີຖານ ໒ ນັ້ນ ມີຢູ່ ໒ ດວງ

ຈິຕທຳກິຈ ໓ ມີຖານ ໓ ນັ້ນ ມີຢູ່ ໙ ດວງ

ຈິຕທຳກິຈ ໔ ມີຖານ ໔ ນັ້ນ ມີຢູ່ ກ ດວງ

ຈິຕທຳກິຈ ໕ ມີຖານ ໕ ນັ້ນ ມີຢູ່ ໒ ດວງ

## ອະທິບາຍ

***ຈິຕທີ່ທຳກິຈ ໑ ຢ່າງ ແລະມີຖານ ໑ ນັ້ນ ມີຈຳນວນ ຝກ ດວງ ຄື***

| | | | |
|---|---|---|---|
| ຈັກຂຸວິຌຌາຕຈິຕ | ໒ ດວງ | ທຳໜ້າທີ່ ທັສສນກິຈ | ຢ່າງດຽວ ທຳທີ່ ປັຌຈວິຌຌາຕຖານ |
| ໂສຕວິຌຌາຕຈິຕ | ໒ ດວງ | ທຳໜ້າທີ່ ສວນກິຈ | ຢ່າງດຽວ ທຳທີ່ ປັຌຈວິຌຌາຕຖານ |
| ຆານວິຌຌາຕຈິຕ | ໒ ດວງ | ທຳໜ້າທີ່ ຆາຍນກິຈ | ຢ່າງດຽວ ທຳທີ່ ປັຌຈວິຌຌາຕຖານ |
| ຊິວຫາວິຌຌາຕຈິຕ | ໒ ດວງ | ທຳໜ້າທີ່ ສາຍນກິຈ | ຢ່າງດຽວ ທຳທີ່ ປັຌຈວິຌຌາຕຖານ |
| ກາຍວິຌຌາຕຈິຕ | ໒ ດວງ | ທຳໜ້າທີ່ ຜຸສນກິຈ | ຢ່າງດຽວ ທຳທີ່ ປັຌຈວິຌຌາຕຖານ |
| ປັຌຈທວາຣາວັຊຊນຈິຕ | ໑ ດວງ | ທຳໜ້າທີ່ ອາວັຊຊນກິຈ | ຢ່າງດຽວ ທຳທີ່ ອາວັຊຊນຖານ |
| ສັມປຝິຈຈັນນຈິຕ | ໒ ດວງ | ທຳໜ້າທີ່ ສັມປຝິຈຈັນນກິຈ | ຢ່າງດຽວ ທຳທີ່ ສັມປຝິຈຈັນນຖານ |
| ຊວນຈິຕ | ໕໕ ດວງ | ທຳໜ້າທີ່ ຊວນກິຈ | ຢ່າງດຽວ ທຳທີ່ ຊວນຖານ |

## ຈິຕທີ່ທຳກິຈ ໒ ຢ່າງ ແລະມີຖານ ໒ ຖານນັ້ນ ມີ ໒ ດວງ ຄື

| | | | |
|---|---|---|---|
| **ໂສມນັສສັນຕີຈິຕ** | **໑ ດວງ** | ທຳໜ້າທີ່ ສັນຕີຣຕກິຈ | ທີ່ ສັນຕີຣຕຖານ |
| | | ທຳໜ້າທີ່ຕທາລັມພນກິຈ | ທີ່ ຕທາລັມພນຖານ |
| **ມໂນທວາຣາວັຊຊນຈິຕ** | **໑ ດວງ** | ທຳໜ້າທີ່ ອາວັຊຊນກິຈ | ທີ່ ອາວັຊຊນຖານ |
| | | ທຳໜ້າທີ່ໂວຝກັພພນກິຈ | ທີ່ ໂວຝກັພພນຖານ |

## ຈິຕທີ່ທຳກິຈ ໓ ຢ່າງ ແລະມີ ຖານ ໓ ຖານນັ້ນ ມີ ໙ ດວງ ຄື

| | | | |
|---|---|---|---|
| **ມຫັຄຄຕວິບາກຈິຕ** | **໙ ດວງ** | ທຳໜ້າທີ່ ປຝິສົນທິກິຈ | ທີ່ ປຝິສົນທິຖານ |
| | | ທຳໜ້າທີ່ ກວັງຄກິຈ | ທີ່ ກວັງຄຖານ |

ທຳໜ້າທີ່ ຈຸຕິກິຈ ທີ່ ຈຸຕິຖານ

## ຈິດທີ່ທຳກິຈ ໔ ຢ່າງ ແລະມີຖານ ໔ ຖານນັ້ນ ມີ ໗ ດວງ ຄື

**ມຫາວິບາກຈິດ** **໗ ດວງ** ທຳໜ້າທີ່ ປະຕິສົນທິກິຈ ທີ່ ປະຕິສົນທິຖານ
ທຳໜ້າທີ່ ພວັງຄະກິຈ ທີ່ ພວັງຄະຖານ
ທຳໜ້າທີ່ ຈຸຕິກິຈ ທີ່ ຈຸຕິຖານ
ທຳໜ້າທີ່ ຕະທາລັມພະນະກິຈ ທີ່ ຕະທາລັມພະນະຖານ

## ຈິດທີ່ທຳກິຈ ໕ ຢ່າງ ແລະມີຖານ ໕ ຖານນັ້ນ ມີ ໔ ດວງ ຄື

**ອຸເປກຂາ ສັນຕີຈິດ** **໔ ດວງ** ທຳໜ້າທີ່ ປະຕິສົນທິກິຈ ທີ່ ປະຕິສົນທິຖານ
ທຳໜ້າທີ່ ພວັງຄະກິຈ ທີ່ ພວັງຄະຖານ
ທຳໜ້າທີ່ ຈຸຕິກິຈ ທີ່ ຈຸຕິຖານ
ທຳໜ້າທີ່ ສັນຕີຣະນະກິຈ ທີ່ ສັນຕີຣະນະຖານ
ທຳໜ້າທີ່ ຕະທາລັມພະນະກິຈ ທີ່ ຕະທາລັມພະນະຖານ



# ເຈຕສິກທຳກິຈ

໑. **ເຈຕສິກທີ່ທຳໜ້າທີ່ ໑ ກິຈ** ມີ ໑໗ ດວງ ຄື

| | | | |
|---|---|---|---|
| ອກຸສົລເຈຕສິກ ໑໔ | | **ທຳໜ້າທີ່** | ຊວນກິຈ **ຢ່າງດຽວ** |
| ວິຣະເຈຕສິກ | ໓ | | |

໔. **ເຈຕສິກທີ່ທຳໜ້າທີ່ ໔ ກິຈ** ມີ ໔ ດວງ ຄື

**ອັປປມັນຍາເຈຕສິກ ໔** ທຳໜ້າທີ່ **ປະຕິສົນທິກິຈ, ພວັງຄກິຈ, ຈຸຕິກິຈ, ຊວນກິຈ**

໓. **ເຈຕສິກທີ່ທຳໜ້າທີ່ ໕ ກິຈ** ມີ ໔໑ ດວງ ຄື

| | | | |
|---|---|---|---|
| ໂສພາຓສາທາຣຕເຈຕສິກ | ໑໙ | | ປະຕິສົນທິກິຈ |
| ປັນຍາເຈຕສິກ | ໑ | | ພວັງຄກິຈ |
| ຈັນທເຈຕສິກ | ໑ | **ທຳໜ້າທີ່** | ຈຸຕິກິຈ |
| | | | ຊວນກິຈ |
| | | | ຕທາລັມພນກິຈ |

໔. **ເຈຕສິກທີ່ທຳໜ້າທີ່ ໖ ກິຈ** ມີ ໑ ດວງ ຄື

**ປີຕິເຈຕສິກ** ທຳໜ້າທີ່ **ປະຕິສົນທິກິຈ, ພວັງຄກິຈ, ຈຸຕິກິຈ, ສັນຕີຣຕກິຈ, ຊວນກິຈ, ຕທາລັມພນກິຈ**

໕. **ເຈຕສິກທີ່ທຳໜ້າທີ່ ໗ ກິຈ** ມີ ໑ ດວງ ຄື

**ວິຣິຍເຈຕສິກ** ທຳໜ້າທີ່ **ປະຕິສົນທິກິຈ, ພວັງຄກິຈ, ຈຸຕິກິຈ, ອາວັຊຊນກິຈ, ໂວຜຖັພພນກິຈ, ຊວນກິຈ, ຕທາລັມພນກິຈ**

໖. **ເຈຕສິກທີ່ທຳໜ້າທີ່ ໙ ກິຈ** ມີ ໓ ດວງ ຄື

| | |
|---|---|
| ວິຕົກເຈຕສິກ | **ທຳໜ້າທີ່:** ປະຕິສົນທິກິຈ, ພວັງຄກິຈ, ຈຸຕິກິຈ, ອາວັຊຊນກິຈ, |
| ວິຈາຣເຈຕສິກ | ສັມປະຕິຈຈັນນກິຈ, ສັນຕີຣຕກິຈ, ໂວຜຖັພພນກິຈ, ຊວນກິຈ, |
| ອະທິໂມກຂເຈຕສິກ | ຕທາລັມພນກິຈ. |

໗. **ເຈຕສິກທີ່ທຳໜ້າທີ່ໝົດທັ້ງ ໑໔ ກິຈ** ມີ ໗ ດວງ ຄື

**ສັພພະຈິຕຕະສາທາລະນະເຈຕະສິກທັ້ງ ໗ ດວງ** ທຳໜ້າທີ່ທຸກກິຈ (**ຜັສສະ ເວທະນາ ສັນຍາ ເຈຕະນາ ເອກັຄຄະຕາ ຊີວິຕິນທຣີຍ ມະນະສິການ**)

## ການຂອງກິຈຢ່າງພິສດານ ໑໕ ການ

ໄດ້ສະແດງມາແລ້ວວ່າ ສຖານທີ່ທຳກິຈຂອງຈິຕນັ້ນໄດ້ຊື່ວ່າ **ການ** ຄື ***ຈິຕທຳປະຕິສົນທິກິຈ*** ກໍເຣັດທີ່ ***ປະຕິສົນທິການ*** ເປັນຕົ້ນ ໄປເຖິງ ***ຈິຕທີ່ທຳຈຸຕິກິຈ*** ກໍເຣັດທີ່ ***ຈຸຕິການ*** ເປັນທີ່ສຸດ ຊຶ່ງຊື່ຂອງກິຈແລະຊື່ຂອງການນັ້ນກໍຕຣົງກັນຄືກັນ ເວັ້ນແຕ່ **ທັສສນະກິຈ ສວນະກິຈ ຄາຍນະກິຈ ສາຍນະກິຈ** ແລະ **ຜຸສນະກິຈ** ຣວມ ໕ ກິຈນີ້ເທົ່ານັ້ນ ທີ່ທຳກິຈທີ່**ປັນຈະວິນຍານະການ** ຊຶ່ງຊື່ຂອງກິຈແລະຊື່ຂອງການບໍ່ຄືກັນ ແຕ່ຖ້າເອີ້ນຊື່ຈິຕທີ່ທຳ ໕ ກິຈນັ້ນວ່າປັນຈະວິນຍານະຈິຕ ທຳກິຈທີ່ **ປັນຈະວິນຍານະການ** ຊື່ຂອງຈິຕກັບຊື່ຂອງການກໍຄືກັນອີກ

ສ່ວນການຂອງຈິຕຢ່າງພິສດານນີ້ເປັນ ໑໕ ການ ມຸ່ງໝາຍທີ່ຈະສະແດງໃຫ້ຮູ້ອີກ ນັຍໜຶ່ງວ່າ ປະຕິສົນທິການນີ້ມີການຈາກໃສ ເກີດມາກ່ອນ ຈຶ່ງເກີດປະຕິສົນທິການ ແລະເມື່ອປະຕິສົນທິການຜ່ານພົ້ນໄປແລ້ວ ມີການຈາກໃສເກີດຕິດຕາມມາ ຫລືຈິຕທີ່ທຳປະຕິສົນທິກິຈນັ້ນມີຈິຕທຳກິຈໃດເກີດມາກ່ອນ ຈຶ່ງເກີດຈິຕທີ່ທຳປະຕິສົນທິກິຈຂຶ້ນ ແລະເມື່ອຈິຕທີ່ທຳປະຕິສົນທິກິຈດັບໄປແລ້ວ ມີຈິຕທຳກິຈໃດເກີດຕາມຕິດ ມາເປັນລຳດັບ ອັນເປັນການສະແດງການຕາມນັຍ ແຫ່ງວິຖີຈິຕ ຫລືສະແດງການໂດຍອາສັຍວິຖີຈິຕເປັນຫລັກການຈຶ່ງຫລາຍຂຶ້ນເປັນ ໑໕ ການ

ການຂອງກິຈຢ່າງພິສດານ ຄື ປະຕິສົນທິ ມີ ໑ ການ ພວັງຄ ມີ ໖ ການ ອາວັຊຊະນະ ມີ ໔ ການ ປັນຈະວິນຍານະ ໝາຍເຖິງ ປັນຈະວິນຍານະ ໑ ການ ສັມປະຕິຈຈັນນະ ໑ ການ ສັນຕີຣະນະ ໑ ການ ໂວຕຖັພພະນະ ໔ ການ ຊວນະ ໖ ການ ຕະທາລັມພະນະ ໔ ການ ແລະ ຈຸຕິ ໓ ການ ຈຶ່ງຣວມເປັນ ໑໕ ການ ດ້ວຍກັນ ມີຣາຍລະອຽດດັ່ງນີ້

໑. **ປະຕິສົນທິ** ມີ ໑ ການ ຄື ຣະຫວ່າງ ຈຸຕິ ກັບ ພວັງຄ

໒. **ພວັງຄ** ມີ ໖ ການ ຄື

(໑) ຣະຫວ່າງ ປະຕິສົນທິ ກັບ ອາວັຊຊະນະ

(໒) ຣະຫວ່າງ ຕະທາລັມພະນະ ກັບ ອາວັຊຊະນະ

(໓) ຣະຫວ່າງ ຊວນະ ກັບ ອາວັຊຊະນະ

(໔) ຣະຫວ່າງ ໂວຕຖັພພະນະ ກັບ ອາວັຊຊະນະ

(໕) ຣະຫວ່າງ ຕະທາລັມພະນະ ກັບ ຈຸຕິ

(໖) ຣະຫວ່າງ ຊວນະ ກັບ ຈຸຕິ

໓. **ອາວັຊຊະນະ** ມີ ໔ ການ ຄື

(໑) ລະຫວ່າງ ກວັງຄ ກັບ ປັນຈະວິນຍານ

(໒) ລະຫວ່າງ ກວັງຄ ກັບ ຊວນະ

໔. **ປັນຈະວິນຍານ** ມີ ໑ ຖານ ຄື ລະຫວ່າງ ອາວັຊຊະນະ ກັບ ສັມປະຕິຈັນນະ

໕. **ສັມປະຕິຈັນນະ** ມີ ໑ ຖານ ຄື ລະຫວ່າງ ປັນຈະວິນຍານ ກັບ ສັນຕີຣະນະ

໖. **ສັນຕີຣະນະ** ມີ ໑ ຖານ ຄື ລະຫວ່າງ ສັມປະຕິຈັນນະ ກັບ ໂວດຖັພພະນະ

໗. **ໂວດຖັພພະນະ** ມີ ໒ ຖານ ຄື

(໑) ລະຫວ່າງ ສັນຕີຣະນະ ກັບ ຊວນະ

(໒) ລະຫວ່າງ ສັນຕີຣະນະ ກັບ ກວັງຄ

໘. **ຊວນະ** ມີ ໖ ຖານ ຄື

(໑) ລະຫວ່າງ ອາວັຊຊະນະ ກັບ ຕະທາລັມພະນະ

(໒) ລະຫວ່າງ ອາວັຊຊະນະ ກັບ ກວັງຄ

(໓) ລະຫວ່າງ ອາວັຊຊະນະ ກັບ ຈຸຕິ

(໔) ລະຫວ່າງ ໂວດຖັພພະນະ ກັບ ຕະທາລັມພະນະ

(໕) ລະຫວ່າງ ໂວດຖັພພະນະ ກັບ ກວັງຄ

(໖) ລະຫວ່າງ ໂວດຖັພພະນະ ກັບ ຈຸຕິ



໙. **ຕະທາລັມພະນະ** ມີ ໒ ຖານ ຄື

(໑) ລະຫວ່າງ ຊວນະ ກັບ ກວັງຄ

(໒) ລະຫວ່າງ ຊວນະ ກັບ ຈຸຕິ

໑໐. **ຈຸຕິ** ມີ ໓ ຖານ ຄື

(໑) ລະຫວ່າງ ຕະທາລັມພະນະ ກັບ ປະຕິສົນທິ

(໒) ລະຫວ່າງ ຊວນະ ກັບ ປະຕິສົນທິ

(໓) ລະຫວ່າງ ກວັງຄ ກັບ ປະຕິສົນທິ

ຖານພິສດານ ໒໕ ຖານ ນີ້ ເມື່ອໄດ້ສຶກສາເຖິງວິຖີຈິດ ຊຶ່ງເປັນປະລິຈເສດທີ່ ໔ ແລ້ວ ຈະເຂົ້າໃຈໄດ້ດີຂຶ້ນ

# ຫມວດທີ່ ៤ ທວາຣສັງຄະຫະ

**ທວາຣສັງຄະຫະ** ເປັນການຮວບຮວມສະແດງເຣື່ອງທວາຣ **ທວາຣ** ແປລວ່າ **ປຣະຕູ** ຄື ທາງເຂົ້າອອກ ໃນທີ່ນີ້ຫມາຍເຖິງທາງທີ່**ຈິຕ ເຈຕສິກ**ໄດ້ຮັບອາຣົມຕ໌ ຫລື ຈິຕເຈຕສິກໄດ້ຮັບອາຣົມຕ໌ທາງນັ້ນ ປຣະຕູນັ້ນ ທວາຣນັ້ນ ເຊັ່ນ ຈິຕເຈຕສິກໄດ້ຮັບອາຣົມຕ໌ທາງຕາ ທາງຈັກຂຸທວາຣ, ທາງຫູ ທາງໂສຕທວາຣ, ທາງດັງ ຆານທວາຣ, ທາງລີ້ນ ຊິວຫາທວາຣ ເປັນຕົ້ນ ມີຄາຖາສັງຄະຫະ ເປັນຄາຖາທີ່ ໙ ສະແດງວ່າ

໙. ເອກທ຺ວາຣິກຈິຕ຺ຕານິ ປຌ຺ຈທ຺ວາຣິການິ ຈ
ຉທ຺ສາຣິກວິມ຺ຕ຺ຕານິ ວິມ຺ຕ຺ຕານິ ຈ ສພ຺ພຖາ ฯ

ແປລຄວາມວ່າ ຈິຕອາສັຍທວາຣດຽວກໍມີ ອາສັຍ ៥ ທວາຣກໍມີ ອາສັຍ ໖ ທວາຣກໍມີ ບາງເທື່ອອາສັຍທວາຣທັງ ໖ ແດ່ ບໍ່ອາສັຍແດ່ກໍມີ ແລະທີ່ບໍ່ອາສັຍເລີຍທັງ ໖ ທວາຣກໍມີ ມີຢູ່ທຸກປຣະການ

## ອະທິບາຍ

ທີ່ວ່າມີຢູ່ທຸກປຣະການນັ້ນ ຮວມມີຢູ່ດ້ວຍກັນ ៥ ປຣະການ ຄື

໑. ຈິຕທີ່ອາສັຍເກີດໄດ້ທາງ ທວາຣດຽວ ເອີ້ນວ່າ **ເອກທວາຣິກຈິຕ**

໒. ຈິຕທີ່ອາສັຍເກີດໄດ້ທາງ ທວາຣທັງ ៥ ເອີ້ນວ່າ **ປັຌຈທວາຣິກຈິຕ**

໓. ຈິຕທີ່ອາສັຍເກີດໄດ້ທາງ ທວາຣທັງ ໖ ເອີ້ນວ່າ **ຉທວາຣິກຈິຕ**

໔. ຈິຕທີ່ອາສັຍເກີດໄດ້ທາງ ທວາຣທັງ ໖ ແດ່ ແຕ່ບາງເທື່ອກໍເກີດພົ້ນທວາຣ ຄືບໍ່ຕ້ອງອາສັຍທວາຣແດ່ ເອີ້ນ **ຉທວາຣິກວິມຸຕຕຈິຕ**

៥. ຈິຕທີ່ເກີດ **ພົ້ນທວາຣແນ່ນອນ** ຄື ຈິຕນັ້ນເກີດໂດຍບໍ່ຕ້ອງອາສັຍທວາຣທັງ ໖ ເລີຍທີດຽວ ເອີ້ນວ່າ **ທວາຣວິມຸຕຕຈິຕ**

**ທວາຣ** ຄື **ປຣະຕູ** ຫລື **ທາງ** ທີ່ຈິຕເຈຕສິກອາສັຍເປັນທາງໃຫ້ໄດ້ຮັບອາຣົມຕ໌ ຊຶ່ງມີຢູ່ ໖ ທວາຣ ຫລື ໖ ທາງດ້ວຍກັນ ຄື

໑. ຈັກຂຸທວາຣ ຄື ທາງຕາ ອີງຄ໌ທັມມ໌ໄດ້ແກ່ **ຈັກຂຸປສາທຣູປ**

໒. ໂສຕທວາຣ ຄື ທາງຫູ ອີງຄ໌ທັມມ໌ໄດ້ແກ່ **ໂສຕປສາທຣູປ**

໓. ຆານທວາຣ ຄື ທາງດັງ ອີງຄ໌ທັມມ໌ໄດ້ແກ່ **ຆານປສາທຣູປ**

໔. ຊິວຫາທວາຣ ຄື ທາງລີ້ນ ອີງຄ໌ທັມມ໌ໄດ້ແກ່ **ຊິວຫາປສາທຣູປ**

໕. ກາຍທວາຣ ຄື ທາງກາຍ ອີງອັສັມມໍໄດ້ແກ່ **ກາຍປສາທຣູປ**

໖. ມໂນທວາຣ ຄື ທາງໃຈ ອີງຄ໌ສັມມໍໄດ້ແກ່ **ກວັງຄຈິຕ**

ຕັ້ງແຕ່ເລຂ ໑ ເຖິງ ໕ ຣວມ ໕ ທວາຣນີ້ເອີ້ນວ່າ **ປັນຈທວາຣ** ອີງຄ໌ສັມມໍໄດ້ແກ່ **ປສາທຣູປທັ້ງ ໕** ເປັນຣູປທວາຣ ເປັນທາງໃຫ້ທວິປັນຈວິນຍານເກີດຂຶ້ນຮັບຮູ້ອາຣົມຕ໌ ທັ້ງ ໕ ໄດ້ແກ່ ຣູປ ສຽງ ກິ່ນ ຣົສ ການສັມຜັສຖືກຕ້ອງ ແລະເປັນທາງໃຫ້ເກີດວິຖີຈິຕ ທາງປັນຈທວາຣອີກດ້ວຍ

ຈະເພາະເລຂ ໖ **ມໂນທວາຣ** ອີງຄ໌ສັມມໍໄດ້ແກ່ **ກວັງຄຈິຕ** ນັ້ນເປັນນາມທວາຣ ກວັງຄຈິຕນີ້ເປັນເຫຕຸແຫ່ງ ຄວາມເກີດຂຶ້ນຂອງຈິຕ ທັ້ງປວງແລະເປັນທາງໃຫ້ເກີດ**ວິຖີຈິຕທາງມໂນທວາຣ** ອີກນຳ

ທວາຣທັ້ງ ໖ ນີ້ເປັນ **ຣູປສັມມໍ ໕ ທວາຣ** ເປັນ **ນາມສັມມພຽງທວາຣດຽວ** ແລະທວາຣໃດມີຈິຕອາສັຍເປັນທາງ ໃຫ້ເກີດໄດ້ ເປັນຈຳນວນເທົ່າໃດນັ້ນ ມີຄາຖາສັງຄຫະເປັນຄາຖາທີ່ ໑໐ ວ່າ

໑໐. ຉຕຸຕິສຕິ ຕຖາ ຕິຕິ ເອກຕຸຕິສ ຢຖາກ຺ກມໍ
ທສລາ ນວລາເຈຕິ ປຍ຺ຈລາ ປຣິທີປເຢ ໆ

ແປລຄວາມວ່າ ຄວຣກຳຫນົດຈຳນວນຈິຕເຫລົ່ານັ້ນ ໕ ປຣະເພທຕາມລຳດັບ ຄື

ເອກທວາຣິກຈິຕ ມີ ໓໖ ດວງ

ປັນຈທວາຣິກຈິຕ ມີ ໓ ດວງ

ຉທວາຣິກຈິຕ ມີ ໓໑ ດວງ

ຉທວາຣິກວິມຸຕຕຈິຕ ມີ ໑໐ ດວງ

ທວາຣວິມຸຕຕຈິຕ ມີ ໙ ດວງ

## ອະທິບາຍ

໑. **ເອກທວາຣິກຈິຕ** ຈິຕທີ່ອາສັຍເກີດໄດ້ທາງ ທວາຣດຽວ ມີຈຳນວນ ໓໖ ດວງ ໄດ້ແກ່

ທວິປັນຈວິນຍາຕ ໑໐

ອັປປນາຊວນະ ໓໖

໒. **ປັນຈະທວາຣິກະຈິດ** ຈິດທີ່ອາສັຍເກີດໄດ້ທາງທວາຣທັງ ໕ (ປັນຈະທວາຣ) ມີ ໓ ດວງ ໄດ້ແກ່

| | |
|---|---|
| ປັນຈະທວາຣາວັຊຊະນະຈິດ ໑<br>ສັມປະຕິຈັນນະຈິດ ໒ | ຣວມເອີ້ນ ມະໂນທາຕຸ |

໓. **ຈະທວາຣິກະຈິດ** ຈິດທີ່ອາສັຍເກີດໄດ້ທາງທວາຣທັງ ໖ ມີ ໓໑ ດວງ ໄດ້ແກ່

ໂສມນັສ ສັນຕີຣະຈິດ ໑

ມະໂນທວາຣາວັຊຊະນະຈິດ ໑

ກາມຊະວະນະຈິດ ໒໙

໔. **ຈະທວາຣິກະວິມຸດຕະຈິດ** ບ້າງເທື່ອກໍເອີ້ນວ່າ **ຈະທວາຣິກະທວາຣະວິມຸດຕະຈິດ** ຈິດທີ່ບາງເທື່ອກໍອາສັຍທວາຣທັງ ໖ ເກີດ ແລະບາງເທື່ອກໍ ບໍ່ອາສັຍທວາຣທັງ ໖ ເກີດ ມີ ໑໐ ດວງ ໄດ້ແກ່

ອຸເປກຂາ ສັນຕີຣະຈິດ ໒

ມະຫາວິບາກະຈິດ ໘

ເມື່ອອຸເປກຂາ ສັນຕີຣະຈິດ ໒ ດວງນີ້ ທຳໜ້າທີ່ ສັນຕີຣະນະກິຈ ຫລື ຕະທາລັມພະນະກິຈກໍດີ ມະຫາວິບາກະຈິດ ໘ ດວງ ທຳໜ້າທີ່ ຕະທາລັມພະນະກິຈກໍດີ **ກໍຕ້ອງອາສັຍທວາຣ**ເປັນທາງເກີດ ແຕ່ຖ້າຈິດ ໑໐ ດວງນີ້ທຳໜ້າທີ່ ປະຕິສົນທິກິຈ ກວັງຄະກິຈ ຈຸຕິກິຈ ໓ ຢ່າງນີ້ ກໍ **ບໍ່ຕ້ອງອາສັຍທວາຣ**ເລີຍ

໕. **ທວາຣະວິມຸດຕະຈິດ** ຈິດທີ່ເກີດພົ້ນຈາກທວາຣທັງ ໖ ຄື ຈິດທີ່ເກີດໂດຍບໍ່ຕ້ອງອາສັຍ ທວາຣທັງ ໖ ເລີຍ ມີ ໙ ດວງ ໄດ້ແກ່

ມະຫັຄຄະຕະວິບາກະຈິດ ໙ ທີ່ກ່າວມາແລ້ວຂ້າງເທິງນີ້ ເປັນການສະແດງຈຳນວນຈິດທີ່ຕ້ອງອາສັຍທວາຣ ຫລືບໍ່ຕ້ອງອາສັຍທວາຣ ໂດຍແນ່ນອນ (ເອກັນຕະ) ແຕ່ຢ່າງດຽວ

ຕໍ່ໄປນີ້ ຈະສະແດງຣາຍລະອຽດຂອງຈຳນວນຈິດທີ່ເກີດໄດ້ແຕ່ລະທວາຣ ທັງທີ່ **ແນ່ນອນ (ເອກັນຕະ)** ແລະທີ່ **ບໍ່ແນ່ນອນ (ອເນກັນຕະ)** ດ້ວຍ

໑. ຈິດທີ່ເກີດໄດ້ທາງ ຈັກຂຸທວາຣ ເອີ້ນວ່າ ຈັກຂຸທວາຣິກະຈິດ ມີ ໔໖ ດວງ

໒. ຈິດທີ່ເກີດໄດ້ທາງ ໂສຕທວາຣ ເອີ້ນວ່າ ໂສຕທວາຣິກະຈິດ ມີ ໔໖ ດວງ

໓. ຈິດທີ່ເກີດໄດ້ທາງ ຆານທວາຣ ເອີ້ນວ່າ ຆານທວາຣິກະຈິດ ມີ ໔໖ ດວງ

໔. ຈິດທີ່ເກີດໄດ້ທາງ ຊິວຫາທວາຣ ເອີ້ນວ່າ ຊິວຫາທວາຣິກະຈິດ ມີ ໔໖ ດວງ

໕. ຈິດທີ່ເກີດໄດ້ທາງ ກາຍທວາຣ ເອີ້ນວ່າ ກາຍທວາຣິກຈິດ ມີ ໔໖ ດວງ

໖. ຈິດທີ່ເກີດໄດ້ທາງ ມໂນທວາຣ ເອີ້ນວ່າ ມໂນທວາຣິກຈິດ ມີ ໖໗ ດວງ

໗. ຈິດທີ່ເກີດໄດ້ທາງ ທວາຣດຽວ ເອີ້ນວ່າ ເອກທວາຣິກຈິດ ມີ ໓໐ ດວງ

໘. ຈິດທີ່ເກີດໄດ້ທາງ ທວາຣ ໕ ເອີ້ນວ່າ ປັຍຈທວາຣິກຈິດ ມີ ໔໔ ດວງ

໙. ຈິດທີ່ເກີດໄດ້ທາງ ທວາຣ ໖ ເອີ້ນວ່າ ຉທວາຣິກຈິດ ມີ ໔໑ ດວງ

໑໐. ຈິດທີ່ເກີດພົ້ນຈາກທວາຣທັ້ງ ໖ ເອີ້ນວ່າ ທວາຣວິມຸຕຕຈິດ ມີ ໑໙ ດວງ

ຈະເພາະ **ຈັກຂຸທວາຣິກຈິດ** ແລະ**ໂສຕທວາຣິກຈິດ** ສອງປຣະເພທນີ້ເທົ່ານັ້ນ ຖ້ານັບອະພິຍຍາ ຈິດ ໒ ດວງ ຄື **ທິພພຈັກຂຸຍານ** ທີ່ເປັນກຸສົລ ໑ ກິຣິຍາ ໑ ຮວມເຂົ້າດ້ວຍ ຈັກຂຸທວາຣິກຈິດກໍ່ ມີ ໔໘ ດວງ ແລະ ນັບທິພພໂສຕຍານ ທີ່ເປັນກຸສົລ ໑ ກິຣິຍາ ໑ ຮວມເຂົ້າດ້ວຍ ໂສຕທວາຣິກຈິດ ກໍ່ມີ ໔໘ ດວງ

## ໑. ຈັກຂຸທວາຣິກຈິດ ມີ ໔໖ ດວງ

| ແນ່ນອນ (ເອກັນຕະ) ໒ ດວງ ໄດ້ແກ່ | | ບໍ່ແນ່ນອນ (ອເນກັນຕະ) ໔໔ ດວງ ໄດ້ແກ່ | |
|---|---|---|---|
| ຈັກຂຸວິຍຍານຈິດ | ໒ | ມໂນທາຕຸ | ໓ |
| | | ມໂນທວາຣາວັຊຊນຈິດ | ໑ |
| | | ກາມຊວນຈິດ | ໒໙ |
| | | ຕທາລັມພນຈິດ | ໑໑ |

## ໒. ໂສຕທວາຣິກຈິດ ມີ ໔໖ ດວງ

| ແນ່ນອນ (ເອກັນຕະ) ໒ ດວງ ໄດ້ແກ່ | | ບໍ່ແນ່ນອນ (ອເນກັນຕະ) ໔໔ ດວງ ໄດ້ແກ່ | |
|---|---|---|---|
| ໂສຕວິຍຍານຈິດ | ໒ | ມໂນທາຕຸ | ໓ |
| | | ມໂນທວາຣາວັຊຊນຈິດ | ໑ |
| | | ກາມຊວນຈິດ | ໒໙ |
| | | ຕທາລັມພນຈິດ | ໑໑ |

